

# ພຣະອກິລັມມັຕຖສັງຄຫະ

## ປຣິຈເຊທທີ່ ໑ (ຈິຕປຣມັຕຖ)

ຮວບຮວມຮຽບຮຽງໂດຍ... ...ອາຈາຣຍ໌ໄພທູຣຍ໌ ອິນທວົງສ໌

# ຄູ່ມືກາຣສຶກສາພຣະອພິລັມມ໌

*"ຈິຕປຣມັຕຖ"*

## ພຣະອພິລັມມັຕຖສັງຄຫະ

### ປຣິຈເຉທທີ່ ໑

*ຣຈນາໂດຍ....*

## ພຣະອນຸຣຸທລາຈາຣຍ໌

*ຣວບຣວມຣຽບຣຽງໂດຍ...*

***...ອາຈາຣຍ໌ໄພທູຣຍ໌ ອິນທວົງສ໌***

Fresno .... California March 1, 2557




**ມູລນິທິ: ສຶກສາ-ປຜິບັຕິຌັມມ໌ ເພື່ອເຜີຍແຜ່ພຣະພຸທສາສນາ**
**ໂດຍ:** ອາຈາຣຍ໌ ໄພທູຣຍ໌ ອິນທວົງສ໌ ...ເຟຣສະໂນ ແຄລິຟໍເນັຽ, ສຫຣັຖອເມຣິກາ
Telephone: (໕໕໙) ໙໐໕-໑໔໑໐
E-Mail: Pinthavong@hotmail.com
Website: https://sites.google.com/site/laothaidhamma

# ຄຳນຳ

**ປຶ້**ມ ***"ຄູ່ມືການສຶກສາພຣະອກິຌັມມັຕຖສັງຄຫະ ປຣິຈເຉທທີ່ ໑ (ຈິຕປຣມັຕຖ)"*** ຫົວນີ້ ໄດ້ຣວບຣວມຣຽບຣຽງຂຶ້ນໃຊ້ເປັນຄູ່ມື **ສຶກສາພຣະອກິຌັມມ໌** ໃຫ້ກັບເພື່ອນກັລຍຕມິຕຣ໌ທຸກໆ ທ່ານ ແລະເພື່ອຊ່ວຍເຜີຍແຜ່ສຳຫລັບທ່ານທີ່ສົນໃຈ ທີ່ຢາກມີໄວ້ສຶກສາທາງອອນໄລນ໌ ເພາະເຫັນວ່າຈະຊ່ວຍເຜີຍແຜ່ການສຶກສາພຣະອກິຌັມມ໌ໃຫ້ກວ້າງຂວາງຂຶ້ນ ເພື່ອພວກເຮົາຊາວພຸທສຈະໄດ້ຊ່ວຍກັນສືບທອດວິຊາ "**ວິຊຊ**" ນີ້ໄວ້ໃຫ້ອນຸຊົນຣຸ່ນຫລັງ...ຯລຯ



ຜູ້ຂຽນຖວາຍປຶ້ມເຫລັ້ມນີ້ໄວ້ໃນພຸທສສາສນາໃນລາວ ຫາກວ່າທ່ານທີ່ຕ້ອງການຈັດພິມພ໌ເພື່ອເຜີຍແຜ່ເປັນຌັມມະທານ ກໍຂໍຮ່ວມອນຸໂມທນາມາ ນະ ໂອກາສນີ້ດ້ວຍໂດຍບໍ່ຕ້ອງຂໍອນຸຍາຕຈາກຜູ້ຂຽນເລີຍ..ຯ ແຕ່ຜູ້ຂຽນບໍ່ອນຸຍາຕຫາກວ່າຈະພິມພ໌ເປັນການຄ້າອັນຫວັງຜົລກຳໄຣ ແລະຜູ້ຂຽນຫວັງຢ່າງຍິ່ງວ່າປຶ້ມເຫລັ້ມຈະໃຫ້ຄວາມຮູ້ທາງພຣະຌັມມ໌ໄດ້ເປັນຢ່າງດີ ຂໍໃຫ້ທ່ານຜູ້ອ່ານຈົງຈະເຣີນໃນຌັມມ໌ຂອງພຣະສາສດາ ອຣຫັນຕ໌ ສັມມາສັມພຸທສເຈົ້າທຸກ ໆ ທ່ານດ້ວຍເທີ້ນຯ

# ສາຣບັນ

## ຈິຕປຣມັຕຖ

### ພຣະອກິລັມມັຕຖສັງຄຫະ ປຣິຈເຉທທີ່ ໑

************************************************************

ນໂມ ຕສ຺ສ ກຄວໂຕ ອຣຫໂຕ ສມ຺ມາສມ຺ພຸທສ຺ສ




**ມູລນິທິ: ສຶກສາ-ປຟິບັຕິທັມມ໌ ເພື່ອເຜີຍແຜ່ພຣະພຸທສາສນາ**

**ໂດຍ:** ອາຈາຣຍ໌ ໄພທູຣຍ໌ ອິນທວົງສ໌ ...ເຟຣສະໂນ ແຄລິຟໍເນັຽ, ສຫຣັຖອເມຣິກາ

Telephone: (໕໕໙) ໘໐໕-໑໔໑໐

E-Mail: Pinthavong@hotmail.com

Website: https://sites.google.com/site/laothaidhamma



# ຄູ່ມືການສຶກສາ

ຈິຕປຣມັຕຖ

**ພຣະອភិທັມມັຕຖສັງຄຫະ ປຣິຈເฉທທີ່ ໑**

-------------------------------------

ນໂມ ຕສ຺ສ ກຄວໂຕ ອຣຫໂຕ ສມ຺ມາສມ຺ພຸທສ຺ສ



## ຄວາມເບື້ອງຕົ້ນ

ປຶ້ມເຫລັ້ມນີ້ເປັນການຣວບຣວມຄຳສອນຕາມຄວາມໃນ **ພຣະອភិທັມມັຕຖສັງຄຫະ ປຣິຈເฉທທີ່ ໑ ຊຶ່ງພຣະອນຸຣຸທສາຈາຣຍ໌ ໄດ້ຣຈນາໄວ້ ແລະໃຫ້ຊື່ວ່າ "ຈິຕຕສັງຄຫວິກາຄ"** ອັນມີຄວາມຫມາຍວ່າ ເປັນສ່ວນທີ່ຣວບຣວມກ່າວເຖິງ "ຈິຕປຣມັຕຖ" ໂດຍຫຍໍ້ ດັ່ງນັ້ນປຶ້ມເຫລັ້ມນີ້ຈຶ່ງໃຫ້ຊື່ວ່າ ຄູ່ມືການສຶກສາ ***ຈິຕປຣມັຕຖ.***

ກ່ອນທີ່ຈະກ່າວເຖິງເຣື່ອງຂອງ ຈິຕປຣມັຕຖ ຂໍກ່າວຄວາມເບື້ອງຕົ້ນພໍໃຫ້ຮູ້ທີ່ມາແຫ່ງພຣະອភិທັມມັຕຖສັງຄຫະ ແລະຂໍ້ຄວາມບາງປຣະການທີ່ຄວຣຈະຮູ້ໄວ້ໃນຂັ້ນຕົ້ນນີ້ ເພື່ອຈະໄດ້ສດວກແກ່ການສຶກສາຕໍ່ໄປ

**໑. ສົມເດັຈພຣະສມຕາໂຄດົມສັມມາສັມພຸທສເຈົ້າ** ນັບແຕ່ໄດ້ຕຣັສຮູ້ອນຸຕຕຣສັມໂພທິຍານແລ້ວ ໄດ້ຊົງສັ່ງສອນໂຜດເວໄນຍສັຕວ໌ ເປັນເວລາຍາວນານເຖິງ ໔໕ ປີນັ້ນ ຣວມໄດ້ເຖິງ ໘໔໐໐໐ ພຣະທັມມຂັນທ໌ ເມື່ອປຣະມວລຈັດສັຣ ສົງເຄາະຫ໌ເປັນພວກເປັນຫມວດເປັນຫມູ່ ກໍຈັດໄດ້ເປັນ ໓ ຫມວດ ຊຶ່ງເອີ້ນກັນວ່າ **ພຣະໄຕຣປິຕົກ** ຄື

- ☞ ພຣະວິນັຍປິຕົກ
- ☞ ພຣະສຸຕຕັນຕປິຕົກ
- ☞ ພຣະອភិທັມມປິຕົກ

**໒. ພຣະວິນັຍປິຕົກ** ທັມມ໌ໃດທີ່ສແດງໄວ້ເປັນຂໍ້ບັງຄັບ ເປັນຣະບຽບແບບແຜນໃຫ້ປະພຣຶຕິປະຕິບັຕິ ໂດຍມີຂໍ້ກຳຫນົດໂທສ ແກ່ຜູ້ລ່ວງລະເມີດຫຼືບໍ່ປະຕິບັຕິຕາມໄວ້ເປັນຂັ້ນໆ ຕາມໂທສານຸໂທສນັ້ນ ເອີ້ນວ່າ ພຣະວິນັຍປິຕົກ ມີ ໒໑໐໐໐ ພຣະທັມມຂັນທ໌ ພຣະວິນັຍນີ້ເປັນພື້ນຖານໃນອັນທີ່ຈະສ້າງສັຣຄ໌ໃຫ້ຮູປຮ່າງງົດງາມ ມີສງ່າຣາສີ ແລະກິຣິຍາມາຣຍາທສຸພາພຮຽບຮ້ອຍ

ພຣະວິນັຍປິຕົກ ຊຶ່ງມີ ໒໑໐໐໐ ພຣະທັມມຂັນທ໌ນີ້ ຈຳແນກເປັນ ໕ ຄັມພີຣ໌ມີຊື່ວ່າ ***ຄັມພີຣ໌ອາທິກັມມ໌ ຄັມພີຣ໌ປາຈິຕຕີຍ ຄັມພີຣ໌ມຫາວັຄຄ ຄັມພີຣ໌ຈຸລລວັຄ*** ແລະ ***ຄັມພີຣ໌ປຣິວາຣ*** ເພື່ອໃຫ້ສດວກແກ່ການຈື່ຈຳທຳລີກ ທ່ານໂບຣາຕາຈາຣຍ໌ຈຶ່ງໄດ້ຍົກພຍາງຄ໌ຫນ້າແຫ່ງຄັມພີຣ໌ນັ້ນໆ ມາເປັນເຄື່ອງຈື່ຈຳ ຄື **ອາ ປາ ມະ ຈຸ ປະ** ຕໍ່ມາກໍເລີຍຖືກັນວ່າ **ອາ ປາ ມະ ຈຸ ປະ** ນີ້ຄືຫົວໃຈຂອງ**ພຣະວິນັຍ**

**໓. ພຣະສຸຕຕັນຕປິຕົກ** ທັມມ໌ໃດທີ່ສແດງໄວ້ ໂດຍຍົກບຸຄຄົລຂຶ້ນເປັນຕົວຢ່າງ ທັ້ງໃນທາງດີແລະທາງຊົ່ວ ມຸ່ງຫມາຍທີ່ຈະໃຫ້ເວໄນຍຊົນໄດ້ຮູ້ສົມມຸຕິສັຈຈະ ຄື ຮູ້ຄວາມຈິງຕາມໂວຫາຣຂອງໂລກນັ້ນເອີ້ນວ່າ ພຣະສຸຕຕັນຕປິຕົກ ຊຶ່ງເອີ້ນສັ້ນໆ ວ່າ ພຣະສູຕຣ໌ ມີ ໒໑໐໐໐ ພຣະທັມມຂັນທ໌ ພຣະສູຕຣ໌ນີ້ເປັນພື້ນຖານໃນອັນທີ່ຈະສ້າງສັຣຄ໌ໃຫ້ອັທຍາສັຍສງົບ ແລະມີຈິຕໃຈ ແນ່ວແນ່ມັ່ນຄົງ

ພຣະສຸຕຕັນຕປິຕົກ ຫຼື ພຣະສູຕຣ໌ ຊຶ່ງມີ ໒໑໐໐໐ ພຣະທັມມຂັນທ໌ນີ້ຈຳແນກເປັນ ໕ ນິກາຍ ມີຊື່ວ່າ ***ທີຄນິກາຍ ມັຊຊິມນິກາຍ ສັງຍຸຕຕນິກາຍ ອັງຄຸຕຣນິກາຍ*** ແລະ ***ຂຸທທກນິກາຍ*** ເພື່ອໃຫ້ສດວກແກ່ການຈື່ຈຳທຳລີກ ທ່ານໂບຣາຕາຈາຣຍ໌ຈຶ່ງໄດ້ຍົກພຍາງຄ໌ຫນ້າແຫ່ງນິກາຍນັ້ນໆ ມາເປັນເຄື່ອງຈື່ຈຳ ຄື **ທີ ມະ ສັງ ອັງ ຂຸ** ຕໍ່ມາກໍເລີຍຖືກັນວ່າ **ທີ ມະ ສັງ ອັງ ຂຸ** ນີ້ຄືຫົວໃຈຂອງ**ພຣະສູຕຣ໌**

**໔. ພຣະອະພິທັມມປິຕົກ** ທັມມ໌ໃດທີ່ສແດງໄວ້ເປັນສ່ວນ ລ້ວນແຕ່ເປັນປຣມັຕຖສັຈຈະ ຄື ຕາມຄວາມເປັນຈິງອັນມີເນື້ອຄວາມບໍ່ປ່ຽນແປງຜັນແປຣ ເພື່ອຈະໄດ້ເຫັນແຈ້ງໃນສພາວທັມມ໌ນັ້ນໆ ໂດຍບໍ່ກ່າວອ້າງບຸຄຄົລມາເປັນສຳຄັນນັ້ນ ເອີ້ນວ່າພຣະອະພິທັມມປິຕົກມີ ໔໒໐໐໐ ພຣະທັມມຂັນທ໌ ພຣະອະພິທັມມ໌ນີ້ເປັນພື້ນຖານ ໃນອັນທີ່ຈະສ້າງສັຣຄ໌ໃຫ້ມີສຕິວ່ອງໄວ ມັ່ນຄົງ ແລະມີປັນຍາຫລັກແຫລມ

ພຣະອະພິທັມມປິຕົກ ຊຶ່ງມີ ໔໒໐໐໐ ພຣະທັມມຂັນທ໌ນີ້ ຈຳແນກເປັນ ໗ ຄັມພີຣ໌ມີຊື່ວ່າ ***ທັມມສັງຄະນີ ວິພັງຄ໌ ທາຕຸກະຖາ ປຸຄຄລບັນຍັຕິ ກະຖາວັຕຖຸ ຍະມະກ ແລະ ມຫາປັຕຖານ*** ເພື່ອໃຫ້ສດວກແກ່ການຈື່ຈຳທຳລີກ ທ່ານໂບຣາຕາຈາຣຍ໌ຈຶ່ງໄດ້ຍົກພຍາງຄ໌ຫນ້າແຫ່ງຄັມພີຣ໌ນັ້ນໆ ມາເປັນເຄື່ອງຈື່ຈຳ ຄື **ສັງ ວິ ທາ ປຸ ກະ ຍະ ປະ** ຕໍ່ມາກໍເລີຍຖືກັນວ່າ **ສັງ ວິ ທາ ປຸ ກະ ຍະ ປະ** ນີ້ຄື ຫົວໃຈຂອງ **ພຣະອະພິທັມມ໌**

໑. ຄັມພີຣ໌ ***ທັມມສັງຄະນີ*** ວ່າດ້ວຍ ຫມວດແຫ່ງປຣມັຕຖທັມມ໌

໒. ຄັມພີຣ໌ ***ວິພັງຄ໌*** ວ່າດ້ວຍ ການຈຳແນກປຣມັຕຖທັມມ໌

໓. ຄັມພີຣ໌ ***ທາຕຸກະຖາ*** ວ່າດ້ວຍ ທາຕຸແຫ່ງປຣມັຕຖທັມມ໌

໔. ຄັມພີຣ໌ ***ປຸຄຄລບັນຍັຕິ*** ວ່າດ້ວຍ ບັນຍັຕິ ບຸຄຄົລ ແລະປຣມັຕຖ

໕. ຄັມພີຣ໌ ***ກະຖາວັດຖຸ*** ວ່າດ້ວຍ ການຖາມແລະຕອບໃນປະຣະມັດຖະທັມມ໌

໖. ຄັມພີຣ໌ ***ຍະມະກະ*** ວ່າດ້ວຍ ການສະແດງປະຣະມັດຖະທັມມ໌ເປັນຄູ່ໆ

໗. ຄັມພີຣ໌ ***ມະຫາປັຕຖານ*** ວ່າດ້ວຍ ປັຈຈັຍຂອງປະຣະມັດຖະທັມມ໌

**໕. ພຣະອະພິທັມມ໌ມັດຖະສັງຄະຫະ ມາຈາກຄຳວ່າ**

**ອະພິທັມມະ** ແປລວ່າ ທັມມ໌ອັນປະເສີຖຍິ່ງ ໝາຍຄວາມວ່າ ເປັນທັມມ໌ທີ່ມີຢູ່ຈິງ ເປັນທັມມ໌ທີ່ເປັນຈິງໄດ້ແກ່ ພຣະອະພິທັມມະປິຏົກ ໗ ຄັມພີຣ໌

**ອັຕຖະ** ແປລວ່າ ເນື້ອຄວາມ ໝາຍຄວາມວ່າ ເປັນເນື້ອຫາຫຼືເປັນຫົວຂໍ້ແຫ່ງພຣະອະພິທັມມ໌ ໄດ້ແກ່ ຈິຕ ເຈຕສິກ ຣູປ ນິພພານ ແລະບັນຍັດຕິ

**ສັ** ແປລວ່າ ໂດຍຫຍໍ້

**ຄະຫະ** ແປລວ່າ ຮວບຮວມ

ເມື່ອປະມວລຄວາມໝາຍແຫ່ງຄຳເຫລົ່ານີ້ເຂົ້າດ້ວຍກັນແລ້ວກໍມີຄວາມໝາຍວ່າ ຈິຕ ເຈຕສິກ ຣູປ ນິພພານ ແລະບັນຍັດຕິ ທີ່ພຣະອົງຄ໌ຊົງສະແດງໄວ້ໃນພຣະອະພິທັມມະປິຏົກ ໗ ຄັມພີຣ໌ນັ້ນໄດ້ ຮວບຮວມມາສະແດງໂດຍຫຍໍ້ໃນປກຣຕ໌ນີ້

ພຣະອະພິທັມມັດຖະສັງຄະຫະນີ້ ເປັນຊື່ຂອງປກຣຕ໌ ທີ່ພຣະອະນຸຣຸທທາຈາຣຍ໌ໄດ້ຮວບຮວມອະທິບາຍຄວາມໂດຍຫຍໍ້ແຫ່ງ ພຣະອະພິທັມມະປິຏົກ

**໖. ພຣະອະນຸຣຸທທາຈາຣຍ໌** ເປັນພຣະເຖຣະອົງຄ໌ນຶ່ງ ຊຶ່ງເປັນຊາວເມືອງກາວິລະພັດຈິ ຢູ່ໃນແຄວ້ນມັທທະຣາຖ ທາງພາກໃຕ້ ຂອງປະເທສອິນເດັຽ ໄດ້ໄປສຶກສາພຣະອະພິທັມມະປິຏົກທີ່ອະນຸຣາທບຸຣີ ໃນປະເທສລັງກາ ຈົນມີນາມອຸໂໂພສ ວ່າຊ່ຽວຊານ ແລະ ແຕກສານໃນພຣະອະພິທັມມ໌ ສຳນັກຢູ່ ໓ ວັດຕູມູລໂສມາຣາ, ນັມພອຸບາສິກ ຜູ້ເປັນທາຍົກຈຶ່ງໄດ້ອາຣາທນາຂໍໃຫ້ ຮວບຮວມ ພຣະອະພິທັມມະປິຏົກ ຊຶ່ງເປັນຄັມພີຣ໌ທີ່ລະອຽດອ່ອນເລິກຊຶ້ງຫລາຍນັ້ນ ໃຫ້ສັ້ນແລະງ່າຍເພື່ອສະດວກແກ່ການສຶກສາ ແລະ ຈື່ຈຳ ດ້ວຍຄວາມມຸ່ງໝາຍໃຫ້ເປັນປະໂຍຊນ໌ແກ່ນັກສຶກສາພຣະອະພິທັມມ໌ທັ້ງຫລາຍໃນອະນາຄົຕ ພຣະອະນຸຣຸທທາຈາຣຍ໌ ຈຶ່ງໄດ້ອາສັຍ**ປາລີ ອັຕຖະກະຖາ ຏີກາ** ແລະ**ອະນຸຏີກາ**ເປັນຫລັກໃນການຮວບຮວມ ແລ້ວຮຈນາຂຶ້ນໂດຍຫຍໍ້ ແລະໃຫ້ຊື່ວ່າ ***"ພຣະອະພິທັມມັດຖະສັງຄະຫະ"*** ເມື່ອປະມາຕພຸທທສັກຣາຊ ໗໐໐

ພຣະອະນຸຣຸທທາຈາຣຍ໌ ຜູ້ຮຈນາພຣະອະພິທັມມັດຖະສັງຄະຫະນີ້ໄດ້ຮັບຄວາມຍົກຍ້ອງນັບຖື ວ່າເປັນພຣະເຖຣະເຈົ້າຊັ້ນ ຄັມຖຣຈນາຈາຣຍ໌

**໗. ປາລີ** ໝາຍເຖິງພຣະພຸທທພົຈນ໌ ຄືຄຳເວົ້າທີ່ສົມເດັຈພຣະສັມມາສັມພຸທທເຈົ້າໄດ້ຕຣັສເທສນາໂດຍຕຣົງ

**໘. ອັຕຖະກະຖາ** ແປລຕາມສັພທ໌ວ່າ ກ່າວເນື້ອຄວາມ ອັຕ (ອັຕຖະ - ເນື້ອຄວາມ) + ກະຖາ (ກ່າວຄຳເວົ້າ) ມີຄວາມ ໝາຍວ່າ ອັຕຖະກະຖາ ກ່າວແກ້ເນື້ອຄວາມໃນປາລີ ບໍ່ໄດ້ໝາຍຄວາມວ່າເນື້ອຄວາມໃນປາລີນັ້ນຜິດ ທ່ານອັຕຖະກະຖາຈາຣຍ໌ຈຶ່ງມາ ແກ້ໃຫ້ຖືກ

ນໂມ ຕສ຺ສ ກຄວໂຕ ອຣຫໂຕ ສມ຺ມາສມ຺ພຸທສສ຺ສ **ຄູ່ມືການສຶກສາ** ພຣະອະພິທັມມັດຖະສັງຄະຫະ ປະລິຈເຊດທີ່ ໑ (ຈິຕປຣມັຕຖ)

ແຕ່ຫມາຍຄວາມວ່າ ເນື້ອຄວາມໃນປາລີນັ້ນບໍ່ໄດ້ອະທິບາຍຂະຍາຍຄວາມໂດຍລະອຽດ ອາຈຈະເກີດຂໍ້ສົງສັຍຂຶ້ນໄດ້ທ່ານອັຖກຖາຈາຣຍ໌ຈຶ່ງໄດ້ອະທິບາຍຂະຍາຍຄວາມໃຫ້ລະອຽດກຣະຈ່າງແຈ້ງ ເປັນການແກ້ຂໍ້ສົງສັຍທີ່ຈະມີໃນທັມມ໌ຂໍ້ນັ້ນ

ຜູ້ທີ່ສແດງອັຖກຖານັ້ນ ໄດ້ຮັບຄວາມຍົກຍ້ອງວ່າເປັນອາຈາຣຍ໌ຈຶ່ງເອີ້ນວ່າອັຖກຖາຈາຣຍ໌ ອັຖກຖານັ້ນໄດ້ຮັບຄວາມເຊື່ອຖືເປັນຢ່າງສູງ ຮອງມາຈາກປາລີ

**໙. ຕີກາ** ຄື ຄຳກ່າວແກ້ອັຖກຖາອີກຊັ້ນນຶ່ງ ຫມາຍຄວາມວ່າ ອັຖກຖານັ້ນອາຈມີຂໍ້ຄວາມທີ່ເປັນຕາສົງສັຍ ບໍ່ແຈ່ມແຈ້ງພໍທ່ານຕີກາຈາຣຍ໌ຈຶ່ງອະທິບາຍຂະຍາຍຄວາມເພື່ອແກ້ຂໍ້ສົງສັຍໃນທັມມ໌ສ່ວນນັ້ນໆ ອີກຕໍ່ນຶ່ງ ຕີການີ້ໄດ້ຮັບຄວາມເຊື່ອຖືຮອງລົງມາຈາກອັຖກຖາ ນອກຈາກອັຖກຖາຈາຣຍ໌ແລະຕີກາຈາຣຍ໌ແລ້ວ ຍັງມີອະນຸຕີກາຈາຣຍ໌ແລະເກຈິອາຈາຣຍ໌ອີກ

**໑໐. ອະນຸຕີກາຈາຣຍ໌** ຄື ຜູ້ທີ່ກ່າວແກ້ຂໍ້ສົງສັຍອັນຈະມີໃນຕີກາ

**ເກຈິອາຈາຣຍ໌** ຄື ອາຈາຣຍ໌ອື່ນໆ ທີ່ສແດງຄວາມເຫັນໃນຂໍ້ທັມມ໌ ຫຼື ອະທິບາຍຂະຍາຍຄວາມໃນຂໍ້ທັມມ໌ທົ່ວໆໄປ ອະນຸຕີກາຈາຣຍ໌ກໍດີ ເກຈິອາຈາຣຍ໌ກໍດີ ໄດ້ຮັບຄວາມເຊື່ອຖືລົມຫລັ່ນຮອງລົງມາຈາກຕີກາອີກ ດັ່ງຈະເຫັນໄດ້ວ່າບໍ່ຢາກຈະໄດ້ຖືກຍົກມາກ່າວອ້າງປານໃດ

**໑໑. ພຣະອະພິທັມມ໌** ກ່າວເຖິງທັມມ໌ ໒ ປຣະການ ຄື ປຣມັຕຖທັມມ໌ ໑ ແລະ ບັນຍັດຕິທັມມ໌ ໑

**ປຣມັຕຖທັມມ໌** ເປັນທັມມ໌ທີ່ມີເນື້ອຄວາມອັນບໍ່ວິປຣິຕຜັນແປຣປ່ຽນແປງເລີຍ ປຣມັຕຖທັມມ໌ນັ້ນມີ ໔ ຄື **ຈິຕ ເຈຕສິກ ຣູປ** ແລະ **ນິພພານ**

ສ່ວນ**ບັນຍັດຕິທັມມ໌**ນັ້ນ ບໍ່ແມ່ນສິ່ງທີ່ມີເອງ ເປັນເອງ ແຕ່ເປັນສິ່ງທີ່ບັນຍັດຕິຂຶ້ນ ສົມມຸຕິຂຶ້ນ ເພື່ອເອີ້ນຂານກັນຕາມໂວຫານຂອງຊາວໂລກ ຕາມຄວາມນິຍົມຈະເພາະຫມູ່ຈະເພາະເຫລົ່າ

ທັມມ໌ທີ່ມີເນື້ອຄວາມອັນບໍ່ວິປຣິຕຜັນແປຣປ່ຽນແປງຄື ປຣມັຕຖທັມມ໌ນີ້ຍ່ອມຕ້ອງມີສະພາວະ ຫຼື ສະພາພ ຫຼືລັກສະນະ ໒ ປຣະການ ຄື ສາມັນຍລັກສະນະແລະວິເສສລັກສະນະ

**໑໒. ສາມັນຍລັກສະນະ** ເປັນລັກສະນະສາມັນຍທົ່ວໆ ໄປ ເປັນລັກສະນະຕາມທັມມດາຕາມທັມມຊາຕິ ຕາມປົກຕິທີ່ ປຣມັຕຖທັມມ໌ຈະຕ້ອງມີເຫມືອນໆ ກັນຢູ່ ໓ ຢ່າງ ຄື ອະນິຈຈລັກສະນະ ທຸກຂລັກສະນະ ແລະອະນັຕຕລັກສະນະ

**ອະນິຈຈລັກສະນະ** ເປັນລັກສະນະທີ່ບໍ່ທ່ຽງ ບໍ່ໝັ້ນຄົງ ບໍ່ຍັ່ງຍືນຢູ່ໄດ້ຕລອດການ
**ທຸກຂລັກສະນະ** ເປັນລັກສະນະທີ່ທົນຢູ່ບໍ່ໄດ້ ຈຳຕ້ອງດັບ ຕ້ອງເສື່ອມສລາຍຫາຍສູນໄປ
**ອະນັຕຕລັກສະນະ** ເປັນລັກສະນະທີ່ວ່າງເປົ່າ ບໍ່ແມ່ນຕົວຕົນ ***ບັງຄັບບັນຊາບໍ່ໄດ້*** ທີ່ຈະໃຫ້ເປັນໄປຕາມໃຈມັກຫາໄດ້ບໍ່

ເພາະເຫຕຸວ່າ ສາມັນຍລັກສະນະນີ້ມີ ໓ ປຣະການດັ່ງກ່າວມານີ້ຈຶ່ງໄດ້ຊື່ວ່າ ໄຕຣລັກສະນ໌ ຈິຕ ເຈຕສິກ ແລະຣູປມີໄຕຣລັກສະນ໌ ຫຼື ສາມັນຍລັກສະນະຄົບບໍຣິບູຣຕ໌ທັງ ໓ ປຣະການ ແຕ່ນິພພານມີສາມັນຍລັກສະນະພຽງ ໑ ຄື ອະນັຕຕລັກສະນະເທົ່ານັ້ນ

ສ່ວນບັນຍັດຕິທັມມ໌ ຫາມີສາມັນຍະລັກສະນະ ໓ ປະການ ຄື ໄຕຣລັກສະນ໌ນີ້ ແຕ່ຢ່າງໃດບໍ່ ເພາະບັນຍັດຕິທັມມ໌ບໍ່ແມ່ນປຣມັຕຖທັມມ໌ ແຕ່ເປັນບັນຍັດຕິທັມມ໌ຄື ສົມມຸຕິສັຈຈະ ທີ່ສົມມຸຕິຂຶ້ນ ຫຼື ບັນຍັດຕິຂຶ້ນຕາມໂວຫານຂອງໂລກເທົ່ານັ້ນ ບໍ່ແມ່ນສິ່ງທີ່ມີເອງເປັນເອງ ແຕ່ຢ່າງໃດ

**໑໓. ວິເສສລັກສະນະ** ເປັນລັກສະນະພິເສສປະຈຳຕົວ ເປັນລັກສະນະພິເສສຈຳເພາະຕົວ ຂອງປຣມັຕຖທັມມ໌ແຕ່ລະຢ່າງ ຊຶ່ງບໍ່ເໝືອນກັນເລີຍ ແຕ່ຜິດແຜກແຕກຕ່າງກັນທັງນັ້ນ ວິເສສລັກສະນະນີ້ມີ ໔ ປະການ ຄື **ລັກສະນະ ຣສະ ປັຈຈຸປັຏຖານ** ແລະ **ປທັຏຖານ**

**ລັກສະນະ** ຄື ຄຸນນະພາບ ຫຼື ເຄື່ອງສແດງ ຫຼື ສະພາບໂດຍຈະເພາະທີ່ມີປະຈຳຕົວຂອງທັມມ໌ນັ້ນໆ

**ຣສະ** ຄື ກິຈການງານ ຫຼື ໜ້າທີ່ ທີ່ທັມມ໌ນັ້ນໆ ຄວຣກະທຳຕາມລັກສະນະຂອງຕົນ **ຣສະ** ນີ້ຍັງແບ່ງໄດ້ອີກເປັນ ໒ ຄື **ກິຈຈຣສ** ແລະ **ສັມປັຕຕິຣສ**

**ກິຈຈຣສ** ເຊັ່ນຄວາມຮ້ອນຂອງໄຟ ມີໜ້າທີ່ທຳໃຫ້ສິ່ງຂອງຕ່າງ ໆສຸກ ສັມປັຕຕິຣສ ເຊັ່ນແສງຂອງໄຟ ມີໜ້າທີ່ການງານທຳໃຫ້ສວ່າງ

**ປັຈຈຸປັຏຖານ** ຄື ຜົລຂອງຣສະ ຫຼືອາການປຣາກົຏທີ່ເກີດຈາກທັມມ໌ນັ້ນໆ ໄດ້ທຳກິຈການງານແລ້ວ

**ປທັຏຖານ** ຄື ເຫຕຸໃກ້ ທີ່ທຳໃຫ້ທັມມ໌ນັ້ນໆເກີດຂຶ້ນ

ເພາະເຫຕຸວ່າ ວິເສສລັກສະນະນີ້ມີ ໔ ປະການດັ່ງກ່າວມາແລ້ວນີ້ ຈຶ່ງໄດ້ຊື່ວ່າ **ລັກຂຕາທິຈຕຸກະ** ແປລວ່າ ທັມມ໌ທີ່ມີອົງຄ໌ ໔ ອັນມີລັກສະນະ ເປັນຕົ້ນ

ຈິຕເຈຕສິກ ແລະຣູປ ມີວິເສສລັກສະນະ ຫຼື ລັກຂຕາທິຈຕຸກະ ຄົບບໍຣິບູຣ໌ທັງ ໔ ປະການ ແຕ່ນິພພານມີລັກຂຕາທິຈຕຸກະ ຫຼື ວິເສສລັກສະນະພຽງ ໓ ປະການເທົ່ານັ້ນ ຄື ບໍ່ມີປທັຏຖານ ເຫຕຸໃກ້ໃຫ້ເກີດ ເພາະນິພພານເປັນທັມມ໌ທີ່ພົ້ນຈາກເຫຕຸຈາກປັຈຈັຍທັງປວງ

ສ່ວນບັນຍັດຕິທັມມ໌ນັ້ນ ບໍ່ມີວິເສສລັກສະນະເລີຍ ເພາະເປັນການບັນຍັດຕິຂຶ້ນຕາມຄວາມນິຍົມຂອງຊາວໂລກຈະເພາະໝູ່ຈະເພາະເຫຼົ່າ ດັ່ງຈະເຫັນໄດ້ວ່າ ຂອງເໝືອນກັນ ກໍເອີ້ນຕ່າງກັນ ແລະບາງຢ່າງອອກສຽງເໝືອນກັນ ແຕ່ຄວາມໝາຍຕ່າງກັນ

**໑໔. ພຣະອະພິທັມມັດຖະສັງຄະຫະ** ຊຶ່ງພຣະອນຸຣຸທທາຈາຣຍ໌ໄດ້ຣຈນາຂຶ້ນນັ້ນພໍຈະປຽບໄດ້ວ່າເປັນ "ແບບຮຽນພຣະອະພິທັມມ໌ທີ່ໃຊ້ເວລາບຶດດຽວ" ທ່ານໄດ້ແບ່ງເປັນ ໙ ປະຣິຈເຊດ ຄື

ປະຣິຈເຊດທີ່ ໑ ຊື່ວ່າ ຈິຕຕສັງຄຫວິການ ຣວບຣວມສແດງຈິຕປຣມັຕຖ

ປະຣິຈເຊດທີ່ ໒ ຊື່ວ່າ ເຈຕສິກສັງຄຫວິການ ຣວບຣວມສແດງເຈຕສິກປຣມັຕຖ

ປຣິຈເຈທທີ່ ໓ ຊື່ວ່າ ປກິຕກສັງຄຫວິການ ຣວບຣວມສແດງທັມມ໌ຕ່າງ ໆ ໖ ຫມວດ ຄື ເວທນາ ເຫຕຸ ທວາຣ ກິຈ ອາຣົມຕ໌ ແລະວັຕຖຸ

ປຣິຈເຈທທີ່ ໔ ຊື່ວ່າ ວິຖີສັງຄຫວິການ ຣວບຣວມສແດງວິຖີຈິຕ

ປຣິຈເຈທທີ່ ໕ ຊື່ວ່າ ວິຖີມຸຕຕສັງຄຫວິການ ຣວບຣວມສແດງຈິຕທີ່ພົ້ນວິຖີແລທັມມ໌ທີ່ກ່ຽວເນື່ອງກັບຈິຕທີ່ພົ້ນວິຖີ

ປຣິຈເຈທທີ່ ໖ ຊື່ວ່າ ຣູປສັງຄຫວິການ ຣວບຣວມສແດງຣູປປຣມັຕຖແລະນິພພານ

ປຣິຈເຈທທີ່ ໗ ຊື່ວ່າ ສມຸຈຈຍສັງຄຫວິການ ຣວບຣວມສແດງທັມມ໌ທີ່ສົງເຄາະຫ໌ເຂົ້າເປັນຫມວດດຽວກັນໄດ້

ປຣິຈເຈທທີ່ ໘ ຊື່ວ່າ ປັຈຈັຍສັງຄຫວິການ ຣວບຣວມສແດງທັມມ໌ທີ່ອຸປການະຊຶ່ງກັນແລະກັນ ແລະສແດງບັນຍັຕິທັມມ໌ດ້ວຍ

ປຣິຈເຈທທີ່ ໙ ຊື່ວ່າ ກັມມັຕຖານສັງຄຫວິການ ຣວບຣວມສແດງອາຣົມຕ໌ອັນເປັນທີ່ຕັ້ງແຫ່ງການງານທາງໃຈ ຄື ສມຖະ ແລະ ວິປັສສນາ

*ກຣຸນາເບິ່ງຜັງຈິຕຫນ້າຕໍ່ໄປ...ເປັນການສແດງຈຳນວນຈິຕໂດຍຫຍໍ້ ໘໙ ດວງ ແລະ ໑໒໑ ດວງ*


ຜັງນີ້ເປັນການສແດງຈຳນວນຈິຕໂດຍຫຍໍ້ ໘໙ ແລະ ໑໒໑ ດວງ
ຈິຕ ໘໙ ຫຼື ໑໒໑
ໂລກິຢຈິຕ ໘໑.....
ກາມວຈຣຈິຕ ໕໔....
ອກຸສົລຈິຕ ໑໒......................
໑ ໒ ໓ ໔ ໕ ໖ ໗ ໘ ...ໂລກມູລຈິຕ ໘
໑ ໒ ................ໂທສມູລຈິຕ ໒
໑ ໒ ................ໂມຫມູລຈິຕ ໒
ອເຫຕຸກກຸສົລຈິຕ ໑໘...
໑ ໒ ໓ ໔ ໕ ໖ ໗ .....ອກຸສົລວິບາກຈິຕ ໗
໑ ໒ ໓ ໔ ໕ ໖ ໗ ໘ .ອເຫຕຸກກຸສົລວິບາກຈິຕ ໘
໑ ໒ ໓ ................................ອເຫຕຸກກິຣິຢາຈິຕ ໓
ກາມາວຈຣໂສກຕຈິຕ ໒໔........
໑ ໒ ໓ ໔ ໕ ໖ ໗ ໘ ........ມຫາກຸສົລຈິຕ ໘
໑ ໒ ໓ ໔ ໕ ໖ ໗ ໘ ........ມຫາວິບາກຈິຕ ໘
໑ ໒ ໓ ໔ ໕ ໖ ໗ ໘ ........ມຫາກິຣິຢາຈິຕ ໘
ມຫັຄຄຕຈິຕ ໒໗...............
ຣູປາວຈຣຈິຕ ໑໕.....
໑ ໒ ໓ ໔ ໕ .......ຣູປາວຈຣກຸສົລຈິຕ ໕
໑ ໒ ໓ ໔ ໕ ........ຣູປາວຈຣວິບາກຈິຕ ໕
໑ ໒ ໓ ໔ ໕ ........ຣູປາວຈຣກິຣິຢາຈິຕ ໕
ອຣູປາວຈຣຈິຕ ໑໒...
໑ ໒ ໓ ໔ ............ອຣູປາວຈຣກຸສົລຈິຕ ໔
໑ ໒ ໓ ໔ ............ອຣູປາວຈຣວິບາກຈິຕ ໔
໑ ໒ ໓ ໔ ............ອຣູປາວຈຣກິຣິຢາຈິຕ ໔
ໂລກຸຕຕຣຈິຕ ໔໐....
ໂລກຸຕຕຣກຸສົລຈິຕ ຫຼື ມັຄຄ໌ຈິຕ ໒໐........
໑ ໒ ໓ ໔ ໕ ...ໂສດາມັຄຄຈິຕ ໑ ຫຼື ໕
໑ ໒ ໓ ໔ ໕ ...ສກທາຄາມັຄຄຈິຕ ໑ ຫຼື ໕
໑ ໒ ໓ ໔ ໕ ...ອນາຄາມັຄຄຈິຕ ໑ ຫຼື ໕
໑ ໒ ໓ ໔ ໕ ...ອຣຫັນຕມັຄຄຈິຕ ໑ ຫຼື ໕
ໂລກຸຕຕຣວິບາກຈິຕຈິຕ ຫຼື ຜົລຈິຕ ໒໐.....
໑ ໒ ໓ ໔ ໕ ...ໂສດາຜົລຈິຕ ໑ ຫຼື ໕
໑ ໒ ໓ ໔ ໕ ...ສກທາຄາຜົລຈິຕ ໑ ຫຼື ໕
໑ ໒ ໓ ໔ ໕ ...ອນາຄາຜົລຈິຕ ໑ ຫຼື ໕
໑ ໒ ໓ ໔ ໕ ...ອຣຫັນຕຜົລຈິຕ ໑ ຫຼື ໕
ແຕ້ມໂດຍ: ອາຈາຣຍ໌ໄພທູຣຍ໌ ອິນທວົງສ໌

ສ່ວນລາຍລະອຽດຜັງຫນ້າທີ່ຜ່ານມາຕລອດຈົນຊື່ຂອງຈິດແຕ່ລະດວງນັ້ນຈະປຣາກົຜຕ່ໄປຕາມລຳດັບ ຂໍກ່າວຂໍ້ຄວາມເບື້ອງຕົ້ນແຕ່ພຽງນີ້ ບັດນີ້ຈະໄດດຳເນີນ ຄວາມຕາມເຣື່ອງຂອງ...

## ຈິຕຕສັງຄຫວິກາຄ

ພຣະອາພິທັມມັດຖະສັງຄະຫະປຣິຈເຈດທີ່ ໑ ຊຶ່ງຊື່ວ່າຈິຕຕສັງຄຫວິກາຄນີ້ ພຣະອນຸຣຸທສາຈາຣຍ໌ໄດ້ປຣະພັນ໌ເປັນຄາຖາສັງຄຫະ ຣວມ ໔໑ ຄາຖາ ຄາຖາທີ່ ໑ ປຣະພັນ໌ວ່າ

**໑. ສມ຺ມາສມ຺ພຸທ຺ຍມຕຸລ຺ ສສທ຺ທມ຺ມຄຕຸຕ຺ຕມ຺**
**ອພິວາທິຍ ພາສິສ຺ສ຺ ອພິທມ຺ມຕ຺ຖສງ຺ຄຫ຺ ໆ**

ແປລຄວາມວ່າ ຂ້າພຣະພຸທສເຈົ້າ (ພຣະອນຸຣຸທສາຈາຣຍ໌) ຂໍຖວາຍອພິວາທ ສົມເດັຈພຣະສັມມາສັມພຸທສເຈົ້າ ຜູ້ຊົງອຸດົມດ້ວຍສີລາທິຄຸຕ ຫາຜູ້ສເມີເຫມືອນບໍ່ໄດ້ພ້ອມດ້ວຍພຣະສັທສັມມ໌ແລະຫມູ່ພຣະອຣິຍສົງພເຈົ້າ ແລ້ວຈະກ່າວຄັມພີຣ໌ພຣະອາພິທັມມັດຖະສັງຫະຕໍ່ໄປ

໔. ຕຕ຺ຖ ວຸຕ຺ຕາກິທມ຺ມຕ຺ຖາ ຈຕຸສາ ປຣມຕ຺ຖໂຕ
ຈິຕ຺ຕ຺ ເຈຕສິກ຺ ຣູປ຺ ນິພ຺ພານມິຕິ ສພ຺ພຖາ ໆ

ແປລຄວາມວ່າ ເນື້ອຄວາມແຫ່ງພຣະອພິທັມມ໌ ທີ່ພຣະຜູ້ມີພຣະກາຄເຈົ້າຕຣັສເທສນານັ້ນຄື ປຣມັຕຖທັມມ໌ ໔ ປຣະກາຣ ອັນໄດ້ແກ່ **ຈິຕ ເຈຕສິກ ຣູປ ແລະນິພພານ** ເທົ່ານີ້

## ຈິຕຄືຫຍັງ?

**ຈິຕ** ຄື ທັມມຊາຕິຊນິດນຶ່ງຊຶ່ງ ຮູ້ອາຣົມຕ໌ ຈິຕເປັນຕົວຮູ້ ສິ່ງທີ່ຈິຕຮູ້ນັ້ນເປັນອາຣົມຕ໌ ຈິຕຮູ້ສິ່ງໃດ ສິ່ງນັ້ນແຫລະຄືອາຣົມຕ໌

ອີກນັຍນຶ່ງສແດງວ່າ ຈິຕຄືທັມມຊາຕິຊນິດນຶ່ງທີ່ ຮັບ ຈຳ ຄິດ ຮູ້ ຊຶ່ງອາຣົມຕ໌ ຈິຕຕ້ອງມີອາຣົມຕ໌ ແລະຕ້ອງຮັບອາຣົມຕ໌ຈຶ່ງຈະຮູ້ ແລະຈຳ ແລ້ວກໍຄິດຕໍ່ໄປສົມຕາມນັຍຂຍາຍຄວາມຕາມປາລີວ່າ

**ຈິຕ຺ເຕຕີຕິ ຈິຕ຺ຕ຺ ອາຣມ຺ມນ຺ ວິຊານາຕີຕິ ອຕ຺ໂຖ ໆ** ຊຶ່ງແປລເປັນໃຈຄວາມວ່າ ທັມມຊາຕິໃດຍ່ອມຄິດ ທັມມຊາຕິນັ້ນຊື່ວ່າຈິຕ ມີອັຖວ່າ ທັມມຊາຕິທີ່ຮູ້ອາຣົມຕ໌ ຄື ຈິຕ

ໃນປຜິສັມພິທາພຣະປາລີມຫາວັຄຄ ສແດງວ່າຈິຕນີ້ມີຊື່ທີ່ເອີ້ນໃຊ້ເອີ້ນຂານກັນຕັ້ງ ໑໐ ຊື່ ແຕ່ລະຊື່ກໍສແດງໃຫ້ຮູ້ຄວາມຫມາຍວ່າຈິຕຄືຫຍັງ ດັ່ງຕໍ່ໄປນີ້

**ຍ຺ ຈິຕ຺ຕ຺ ມໂນ ຫທຍ຺ ມານສ຺ ປນ຺ທຣ຺ ມນາຍຕນ຺ ມນິນ຺ທຣິຍ຺ ວິຍ຺ຍານ຺ ວິຍ຺ຍາຕກ຺ຂນ຺ໂທ ຕຊ຺ຊາ ມໂນວິຍ຺ຍາຕທາຕຸ ອິທ຺ ຈິຕ຺ຕ຺ ໆ**

ຊຶ່ງ **ອັຝຖສາລິນີອັຖກຖາ** ອະທິບາຍວ່າ

໑. ທັມມຊາຕິໃດຍ່ອມຄິດ ທັມມຊາຕິນັ້ນຊື່ວ່າ **ຈິຕ**

໒. ທັມມຊາຕິໃດຍ່ອມນ້ອມໄປຫາອາຣົມ ທັມມຊາຕິນັ້ນຊື່ວ່າ **ມໂນ**

໓. ຈິຕນັ້ນແຫລ່ະໄດ້ຮວບຮວມອາຣົມໄວ້ພາຍໃນ ດັ່ງນັ້ນຈຶ່ງຊື່ວ່າ **ຫທັຍ**

໔. ທັມມຊາຕິຄື ທັບທະທີ່ມີໃນໃຈນັ້ນເອງ ຊື່ວ່າ **ມານັສ**

໕. ຈິຕເປັນທັມມຊາຕິທີ່ຜ່ອງໃສ ຈຶ່ງຊື່ວ່າ **ປັຓທຣະ**

໖. ມນະນັ້ນເອງເປັນອາຢຕນະ ຄືເປັນເຄື່ອງຕໍ່ ຈຶ່ງຊື່ວ່າ **ມນາຢຕນະ**

໗. ມນະອີກນັ້ນແຫລະທີ່ເປັນອິນທຣີຍ໌ ຄືຄອງຄວາມເປັນໃຫຍ່ ຈຶ່ງຊື່ວ່າ **ມນິນທຣີຍ໌**

໘. ທັມມຊາຕິໃດທີ່ຮູ້ແຈ້ງອາຣົມ ທັມມຊາຕິນັ້ນຊື່ວ່າ **ວິຍຍາຓ**

໙. ວິຍຍາຓນັ້ນແຫລະເປັນຂັນທ໌ ຈຶ່ງຊື່ວ່າ **ວິຍຍາຓຂັນທ໌**

໑໐. ມນະນັ້ນເອງເປັນທາຕຸຊນິດນຶ່ງ ທີ່ຮູ້ແຈ້ງຊຶ່ງອາຣົມ ຈຶ່ງຊື່ວ່າ **ມໂນວິຍຍາຓທາຕຸ**

## ສະພາບ ຫຼື ລັກສະນະຂອງຈິຕ

ຈິຕເປັນປຣມັຕຖທັມມ໌ ດັ່ງນັ້ນ ຈິຕຈຶ່ງມີສະພາວະ ຫຼືສະພາບ ຫຼືລັກສະນະທັ້ງ ໒ ຢ່າງຄື ທັ້ງ **ສາມັຍລັກສະນະ** ແລະ **ວິເສສລັກສະນະ**

ສາມັຍລັກສະນະ ຫຼື ໄຕຣລັກສະນ໌ຂອງຈິຕ ມີຄົບບໍຣິບູຣ໌ທັ້ງ ໓ ປຣະການຄື ອນິຈຈລັກສະນະ ທຸກຂລັກສະນະ ແລະ ອນັຕຕລັກສະນະ

**ຈິຕນີ້ເປັນອນິຈຈັງ** ຄືບໍ່ທ່ຽງ ບໍ່ໝັ້ນຄົງ ຫມາຍເຖິງວ່າ ບໍ່ຍັ່ງຍືນ ບໍ່ຕັ້ງຢູ່ໄດ້ຕລອດການ

**ຈິຕນີ້ເປັນທຸກຂັງ** ຄືທົນຢູ່ບໍ່ໄດ້ ເພາະເປັນສິ່ງທີ່ບໍ່ຍັ່ງຍືນ ທົນຢູ່ບໍ່ໄດ້ຕລອດການ ຈຶ່ງມີອາການເກີດດັບ ເກີດດັບ ຢູ່ເລື້ອຍໄປ

**ຈິຕນີ້ເປັນອນັຕຕາ** ຄືເປັນສິ່ງທີ່ບໍ່ມີຕົວຕົນ ເປັນສິ່ງທີ່ບັງຄັບບັນຊາໃຫ້ຍັ່ງຍືນ ໃຫ້ທົນຢູ່ບໍ່ໃຫ້ເກີດດັບ ກໍບໍ່ໄດ້ເລີຍແລະເພາະເຫຕຸວ່າຈິຕນີ້ ເກີດດັບ ເກີດດັບ ສືບຕໍ່ເນື່ອງກັນຢ່າງໄວເຫລືອປຣະມາຓ ຈົນປຸຖຸຊົນຄົນທັມມດາເຂົ້າໃຈໄປວ່າ ຈິຕນີ້ບໍ່ມີການເກີດດັບ ແຕ່ວ່າຍັ່ງຍືນຢູ່ຈົນຕລອດຊີວິຕຈຶ່ງດັບໄປກໍເຫມືອນກັບເຂົ້າໃຈວ່າ ກຣະແສໄຟຟ້າຊນິດກຣະແສສລັບ ຊຶ່ງກັບໄປກັບມາຢ່າງໄວ ຈົນຄືວ່າເຮົາເຫັນຫລອດໄຟສວ່າງຢູ່ຕລອດເວລາ ກໍເຂົ້າໃຈວ່າກຣະແສໄຟຟ້າບໍ່ໄດ້ໄຫລໄປແລ້ວກັບຈັ່ງຊັ້ນ

ສ່ວນວິເສສລັກສະນະຫຼື ລັກຂຓາທິຈຕຸກະຂອງຈິຕ ກໍມີຄົບບໍຣິບູຣ໌ທັ້ງ ໔ ປຣະການຄື

**ວິຊານນ ລກ຺ຂນ່** ມີການຮູ້ອາຣົມ ເປັນລັກສະນະ

**ປຸພ຺ພງ຺ຄມ ຣສ໌** ເປັນປຣະທານໃນທັມມ໌ທັ້ງປວງ ເປັນກິຈ

**ສນ຺ທານ ປຈ຺ຈຸປຕ຺ຖານ໌** ມີການເກີດຕໍ່ເນື່ອງກັນບໍ່ຂາດສາຍ ເປັນອາການປຣາກົຍ

**ນາມຣູປ ປທ຺ຖານ໌** ມີນາມຣູປ ເປັນເຫຕຸໃກ້ໃຫ້ເກີດ

ໃນທັມມ໌ບົທ ພາຄ ໔ ມີຄາຖາກ່າວເຖິງເຣື່ອງການຣະວັງສັງວຣຈິຕ ແລະມີຄວາມກ່າວເຖິງ ລັກຂະຕະຫຼືສກາພຂອງຈິຕດ້ວຍ ຈຶ່ງຂໍນຳມາສແດງໄວ້ ໓ ທີ່ນີ້ ດັ່ງນີ້

**ທູຣງ຺ຄມ໌ ເອກຈຣ໌ ອສຣີຣ໌ ຄູຫາສຍ໌**

**ເຢ ຈິຕ຺ຕ໌ ສຍ຺ຍເມສ຺ສນ຺ຕິ ໂມກ຺ຂນ຺ຕິ ມາຣພນ຺ທນາ ฯ**

ແປລຄວາມວ່າ ຊົນທັ້ງຫລາຍໃດ ຈັກຣະວັງຈິຕ ຊຶ່ງໄປໄກລ ໄປດ່ຽວ ບໍ່ມີສຣີຣະ (ຣູປຮ່າງ) ບໍ່ມີຄູຫາເປັນທີ່ອາສັຍ ໄວ້ໄດ້ ຊົນທັ້ງຫລາຍຈະພົ້ນຈາກເຄື່ອງຜູກແຫ່ງມາຣ... ......................ຄາຖາເຕືອນໃຈ ອ. ໄພທູຣຍ໌

ອີກຢ່າງ ຈິຕເປັນສກາວທັມມ໌ທີ່ທຳໃຫ້ເກີດຂຶ້ນ ທຳໃຫ້ເປັນໄປໄດ້ ຄືທຳໃຫ້ວິຈິຕຣ໌ໄດ້ເຖິງ ໖ ປຣະການ

໑. ວິຈິຕຣ໌ໃນການກຣະທຳ ຄືທຳໃຫ້ງົດງາມ ແປລກ ເປັນຕາພິສວົງ ພິລຶກກຶກກື ເຊັ່ນ ສິ່ງຂອງຕ່າງ ໆ ທີ່ມນຸຍ໌ປຣະດິສກ໌ຂຶ້ນ ຍ່ອມມີທັ້ງທີ່ງົດງາມ ແປລກຕາ ເປັນຕາພິສວົງ ຕລອດຈົນເປັນຕາຊັງ ເປັນຕາສຢົດສຢອງເປັນຕາຢ້ານ

໒. ວິຈິຕຣ໌ດ້ວຍຕົນເອງ ຄື ຕົວຈິຕເອງກໍແປລກ ເປັນຕາພິສວົງ ມີປຣະການຕ່າງ ໆ ນານາ ເຊັ່ນ ຈິຕດີກໍມີ ຊົ່ວກໍມີ ຈິຕທີ່ຟຸ້ງຊ່ານ ຈິຕທີ່ສງົບ ຈິຕເບົາປັນຍາ ຈິຕທີ່ຫລາຍດ້ວຍປັນຍາ ຈິຕທີ່ມີຄວາມຈຳເຊື່ອ, ຈິຕທີ່ມີຄວາມຈຳເປັນເລີສ ສຸດທີ່ຈະພັຣຣນາ

໓. ວິຈິຕຣ໌ໃນການສັ່ງສົມກັມມ໌ແລະກິເລສ ກໍເປັນຕາແປລກທີ່ຈິຕນັ້ນແຫລະເປັນຕົວທີ່ກໍ່ກັມມ໌ທຳເຂັຍ ແລະກໍຈິຕນັ້ນແຫລະ ເປັນຕົວສະສົມກັມມ໌ແລະກິເລສທີ່ຕົວນັ້ນທຳໄວ້ເອງ ເປັນຕາແປລກ ເປັນຕາພິສວົງຍິ່ງຂຶ້ນ ກໍຕຣົງທີ່ວ່າ ກັມມ໌ໃດທີ່ບໍ່ດີທີ່ຕົວທຳເອງ ກໍບໍ່ເປັນຕາຈະເກັບສິ່ງທີ່ບໍ່ດີນັ້ນໄວ້ ແຕ່ກໍຈຳຕ້ອງເກັບຕ້ອງສັ່ງສົມໄວ້

໔. ວິຈິຕຣ໌ໃນການຮັກສາໄວ້ ຊຶ່ງວິບາກທີ່ກັມມ໌ແລະກິເລສໄດ້ສັ່ງສົມໄວ້ ຫມາຍຄວາມວ່າກັມມ໌ທັ້ງຫລາຍບໍ່ວ່າຈະເປັນ ກຸສົລກັມມ໌ ຫຼື ອກຸສົລກັມມ໌ທີ່ຈິຕເປັນຕົວການກໍ່ໃຫ້ເກີດຂຶ້ນນັ້ນ ຈະບໍ່ສູນຫາຍໄປໃສເລີຍ ແມ້ຈະຊ້ານານປານໃດ ກໍບໍ່ມີການເສື່ອມ ຄລາຍໄປ ເມື່ອໄດ້ຈັງຫວະໂອກາສເຫມາະເມື່ອໃດ ເປັນຕ້ອງໄດ້ຮັບຜົລຂອງກັມມ໌ເມື່ອນັ້ນຈົນໄດ້

໕. ວິຈິຕຣ໌ໃນການສັ່ງສົມສັນດານຂອງຕົນເອງ ຫມາຍເຖິງວ່າການກຣະທຳກັມມ໌ຢ່າງໃດໆ ກໍຕາມ ຖ້າກຣະທຳຢູ່ເລື້ອຍໆ ທຳຢູ່ສເມີໆ ເປັນເນືອງນິຈ ກໍຕິດຝັງໃນນິສສັຍສັນດານໃຫ້ມັກກຣະທຳ ມັກພຣຶຕິກັມມ໌ຢ່າງນັ້ນໄປເລື້ອຍໆ ໄປ

໖. ວິຈິຕຣ໌ດ້ວຍອາຣົມຕ໌ຕ່າງ ໆ ຫມາຍເຖິງວ່າຈິຕນີ້ຮັບອາຣົມຕ໌ໄດ້ຕ່າງ ໆ ນານາບໍ່ມີທີ່ຈຳກັດແຕ່ເປັນຕາແປລກ ເປັນຕາ ພິສວົງທີ່ມັກໃຈຮັບອາຣົມຕ໌ທີ່ບໍ່ດີ ທີ່ຊົ່ວໄດ້ງ່າຍດາຍ

# ຈຳແນກຈິຕເປັນ ໔ ປະເພທ

ເມື່ອກ່າວຕາມສະພາພ ຄືກ່າວຕາມລັກສະນະຂອງຈິຕແລ້ວ ຈິຕນີ້ມີພຽງ ໑ ເພາະຈິຕມີສະພາວະ ມີສະພາພ ມີລັກສະນະ ຮັບຮູ້ອາຣົມຕ໌ແຕ່ພຽງຢ່າງດຽວເທົ່ານັ້ນເອງ

ແຕ່ເມື່ອກ່າວຕາມອາຣົມຕ໌ທີ່ຮູ້ ຕາມປະເພທທີ່ຮູ້ ກ່າວຄື ຮູ້ໃນເຣື່ອງກາມທີ່ເປັນບຸນເປັນບາປຮູ້ເຣື່ອງຣູປຊາຕ ຮູ້ໃນເຣື່ອງອະຣູປຊາຕ ຮູ້ໃນເຣື່ອງນິພພານເຫລົ່ານີ້ແລ້ວ ຈິຕກໍມີຈຳນວນນັບຢ່າງພິສດາຣໄດ້ເຖິງ ໑໒໑ ດວງ ຫຼື ໑໒໑ ຢ່າງ ໑໒໑ ຊນິດ ແລະຈຳແນກໄດ້ເປັນປະເພທຕາມອາການທີ່ຮູ້ນັ້ນໄດ້ເປັນ ໔ ປະເພທ ຄື

໑. ກາມາວຈຣຈິຕ ໕໔ ດວງ

໒. ຣູປາວຈຣຈິຕ ໑໕ ດວງ

໓. ອະຣູປາວຈຣຈິຕ ໑໒ ດວງ

໔. ໂລກຸຕຕຣຈິຕ ໘ ດວງ ຫຼື ໔໐ ດວງ

**ຣວມເປັນ** ໘໙ ດວງ ຫຼື ໑໒໑ ດວງ

໑. **ກາມາວຈຣຈິຕ** ເປັນຈິຕປະເພທທີ່ຂ້ອງຢູ່ ທີ່ຕິດຢູ່ ທີ່ຫລົງຢູ່ ທີ່ເຈືອຢູ່ໃນກາມຕັຕຫາ ຫຼື ເປັນຈິຕທີ່ສ່ວນຫລາຍທ່ອງທ່ຽວວົນວຽນຢູ່ໃນກາມພູມິ ຈິຕປະເພທນີ້ເອີ້ນສັ້ນໆ ວ່າ **ກາມຈິຕ** ມີຈຳນວນ ໕໔ ດວງ

໒. **ຣູປາວຈຣຈິຕ** ເປັນຈິຕທີ່ເຖິງຊຶ່ງຣູປຊາຕ ພໍໃຈທີ່ຈະເປັນຣູປພຣົຫ໌ມ ຫຼື ເປັນຈິຕທີ່ທ່ອງທ່ຽວຢູ່ໃນຣູປພູມິ ຈິຕປະເພທນີ້ມີຈຳນວນ ໑໕ ດວງ

໓. **ອະຣູປາວຈຣຈິຕ** ເປັນຈິຕປະເພທທີ່ເຂົ້າເຖິງຊຶ່ງອະຣູປຊາຕ ພໍໃຈທີ່ຈະເປັນອະຣູປພຣົຫ໌ມ ຫຼື ເປັນຈິຕທີ່ທ່ອງທ່ຽວຢູ່ໃນອະຣູປພູມິ ຈິຕປະເພທນີ້ມີຈຳນວນ ໑໒ ດວງ

໔. **ໂລກຸຕຕຣຈິຕ** ເປັນຈິຕປະເພທທີ່ກຳລັງພົ້ນແລະພົ້ນແລ້ວຈາກໂລກທັງ ໓ ຄື ພົ້ນຈາກ ກາມໂລກ (ກາມພູມິ), ຈາກຣູປໂລກ (ຣູປພູມິ) ແລະຈາກອະຣູປໂລກ (ອະຣູປພູມິ) ຈິຕປະເພທນີ້ມີຈຳນວນ

ພຽງ ໘ ດວງ ຖ້າຈິຕ ໘ ດວງນີ້ປະກອບດ້ວຍຊາຕດ້ວຍແລ້ວ ຈິຕແຕ່ລະດວງກໍແຈກໄດ້ເປັນ ໕ ຕາມຊັ້ນຕາມປະເພທຂອງຊາຕ ຊຶ່ງມີ ໕ ຊັ້ນ ຈຶ່ງເປັນຈິຕພິສດາຣ ໔໐ ດວງ ດັ່ງນັ້ນ ຈິຕທັງຫມົດນັບໂດຍຫຍໍ້ກໍເປັນ ໘໙ ດວງ ແລະນັບໂດຍພິສດາຣກໍເປັນ ໑໒໑ ດວງທີ່ນັບຢ່າງພິສດາຣນັ້ນ ຈຳນວນທີ່ເພີ່ມຂຶ້ນ ກໍເພີ່ມທີ່ໂລກຸຕຕຣກຸສົລຈິຕປະເພທດຽວເທົ່ານັ້ນ

# ກາມາວຣຈິຕ

**ກາມາວຈຣຈິຕ** ຫຼື ກາມຈິຕ ຊຶ່ງມີຈຳນວນ ໕໔ ດວງນັ້ນ ຈຳແນກໄດ້ເປັນ ໓ ຈຳພວກ ຄື ອກຸສົລຈິຕ ໑໒ ອເຫຕຸກຈິຕ ໑໘ ກາມາວຈໂສກຕາຈິຕ ໒໔

**ອກຸສົລຈິຕ** ເປັນຈິຕທີ່ບໍ່ສລາດ ບໍ່ດີ ບໍ່ງາມ ເປັນຈິຕທີ່ບໍ່ດີ ທີ່ຊົ່ວ ທີ່ຫຍາບ ທີ່ເປັນບາປ ທີ່ມີໂທສ ແລະໃຫ້ຜົລເປັນທຸກຂ໌ ທີ່ທ່ານສແດງອກຸສົລຈິຕກ່ອນ ກໍເພື່ອຈະໃຫ້ຮູ້ຈັກສິ່ງຊົ່ວ ຈະໄດ້ບໍ່ປຣະພຣຶຕິຕໍ່າຊ້າ ອັນຈະນຳຄວາມເດືອດຮ້ອນມາສູ່ຕົນເອງແລະຜູ້ອື່ນ ອຸປມາວ່າເຮົາຈະຕ້ອງຮູ້ຈັກຜູ້ຮ້າຍກ່ອນ ຈະໄດ້ຫລົບຫນີໃຫ້ຫ່າງໄກລ ຈຶ່ງຈະພົ້ນຄວາມເດືອດຮ້ອນວຸ່ນວາຍ ເມື່ອບໍ່ເດືອດຮ້ອນວຸ່ນວາຍ ກໍຈະປົກຕິສຸຂ ມີຄວາມສງົບເປັນໂອກາສທີ່ຈະປຣະກອບກັມມ໌ດີໄດ້ໂດຍສດວກ

**ອເຫຕຸກຈິຕ** ເປັນຈິຕທີ່ ບໍ່ເປັນບຸຍບໍ່ເປັນບາປ ເພາະບໍ່ມີເຫຕຸບຸຍຫຼືເຫຕຸບາປມາຮ່ວມປຣະກອບດ້ວຍ ເປັນຈິຕທີ່ມີປຣະຈຳຢູ່ແລ້ວທົ່ວທຸກຕົວຄົນແລະເກີດຂຶ້ນເປັນນິຈ ແທບບໍ່ມີເວັ້ນວ່າງ ເປັນຈິຕທີ່ບໍ່ແມ່ນບຸຍບໍ່ແມ່ນບາປກໍຈິງ ແຕ່ຫາກວ່າເປັນຈິຕທີ່ເປັນສື່ຫຼືເປັນທາງນ້ອມນຳມາຊຶ່ງບາປແລະບຸຍຢູ່ແທບທຸກຂຕະ ທ່ານຈຶ່ງສແດງອເຫຕຸກຈິຕເປັນອັນດັບສອງ ຮອງຕໍ່ມາຈາກອກຸສົລຈິຕ ທັ້ງນັ້ນເພື່ອຈະໄດ້ຣະມັດຣະວັງສັງວຣໄວ້ ບໍ່ໃຫ້ຕົກໄປໃນທາງອກຸສົລ ອັນເປັນທາງທີ່ຕໍ່າບໍ່ດີ

**ກາມາວຈໂສກຕາຈິຕ** ເປັນຈິຕທີ່ດີ ທີ່ງາມ ທີ່ສລາດ ທີ່ສະອາດ ບໍ່ກໍ່ຄວາມເດືອດຮ້ອນໃຫ້ເກີດຂຶ້ນແກ່ຕົນແລະຄົນອື່ນເລີຍ **ເປັນຈິຕທີ່ປຣາສຈາກໂທສແລະໃຫ້ຜົລເປັນສຸຂ** ຕາມຄວຣແກ່ວິສັຍຂອງບຸຄຄົລທີ່ຍັງຕ້ອງຢູ່ໃນໂລກ

ຮວມຄວາມວ່າ ກາມຈິຕນີ້ ສແດງໃຫ້ຮູ້ວ່າ ຈິຕໃດເປັນຈິຕທີ່ຊົ່ວ ຊຶ່ງຈະເຮັດໃຫ້ຄົນຕົກຕໍ່າໄປເປັນສັຕວ໌ນຣົກ ເປັນເປຕ ເປັນສັຕວ໌ເດຣັຈສານ ການສແດງອກຸສົລຈິຕກໍປຽບໄດ້ວ່າ ສອນຄົນບໍ່ໃຫ້ເປັນສັຕວ໌

ສແດງໃຫ້ຮູ້ວ່າ ຈິຕໃດທີ່ມີປຣະຈຳຢູ່ເປັນນິຈ ອັນເປັນທາງນ້ອມນຳຊຶ່ງບາປແລະບຸຍ ຈະໄດ້ສັງວຣຣະວັງໄວ້ບໍ່ໃຫ້ຕົກໄປໃນທາງທີ່ຊົ່ວ ການສແດງອເຫຕຸກຈິຕ ກໍປຽບໄດ້ວ່າສອນຄົນໃຫ້ຮູ້ຕົວວ່າເປັນຄົນ

ສແດງໃຫ້ຮູ້ວ່າ ຈິຕໃດແດ່ທີ່ດີງາມ ເປັນບຸຍເປັນກຸສົລ ອັນຈະເຮັດໃຫ້ຢູ່ເຢັນເປັນສຸຂ ທັ້ງບໍ່ເປັນທຸກຂ໌ໂທສກັຍແກ່ໃຜໆ ດ້ວຍ ກໍປຽບໄດ້ວ່າ ສອນຄົນໃຫ້ເປັນມນຸສຍ໌ສອນຄົນໃຫ້ເປັນເທວດາ

ຂໍກ່າວເຖິງ ຣູປາວຣຈິຕ ອຣູປາວຈຣຈິຕ ແລະໂລກຸຕຕຣຈິຕເສັຽບ່ອນນີ້ນຳເລີຍ

ການສແດງ ຣູປາວຈຣຈິຕ ແລະອຣູປາວຈຣຈິຕ ເປັນການສອນມນຸສຍ໌ໃຫ້ເປັນເທວດາໃຫ້ເປັນພຣົຫ໌ມ

ການສແດງ ໂລກຸຕຕຣຈິຕ ເປັນການສອນ ມນຸສຍ໌ ເທວດາ ແລະພຣົຫ໌ມ ໃຫ້ຫລຸດພົ້ນຈາກທຸກຂ໌ ບໍ່ຕ້ອງວຽນວ່າຍຕາຍເກີດອີກຕໍ່ໄປ

# ອກຸສົລຈິຕ

ອກຸສົລຈິຕ ແມ້ຈະເປັນຈິຕທີ່ຊົ່ວທີ່ເປັນບາປແລະໃຫ້ຜົລເປັນທຸກຂ໌ ແຕ່ສ່ວນຫລາຍມັກເກີດໄດ້ງ່າຍ ແລະເກີດໄດ້ເລື້ອຍ ທັ້ງນີ້ເພາະເຫຕຸວ່າເມື່ອຈິຕໄດ້ຮັບອາຣົມຕ໌ໃດແລ້ວ ສ່ວນຫລາຍກໍ່ບໍ່ໄດ້ພິຈາຣຕາໃຫ້ແຍບຄາຍ ຄືບໍ່ພິຈາຣຕາໃຫ້ຊຶ່ງເຖິງສກາພຄວາມເປັນຈິງຂອງອາຣົມຕ໌ທີ່ປະສົບນັ້ນ ການບໍ່ໃສ່ໃຈພິຈາຣຕາອາຣົມຕ໌ດ້ວຍດີນີ້ເອີ້ນວ່າ ອໂຍນິໂສມນສິການ ເມື່ອມີອໂຍນິໂສມນສິການ ອກຸສົລຈິຕຍ່ອມເກີດແລະອໂຍນິໂສມນສິການນີ້ ຍ່ອມເກີດຂຶ້ນໂດຍອາສັຍເຫຕຸ ໕ ປຣະການ ຄື

໑. **ປຸພ຺ເພ ອກຕປຸญฺญตา** ບໍ່ໄດ້ສ້າງສົມ ບຸญໄວ້ແຕ່ປາງກ່ອນ

໒. **ອປ຺ປຕິຣູປເທສວາສ** ຢູ່ໃນປຣະເທສທີ່ບໍ່ສົມຄວຣ (ຄືບໍ່ມີສັປບຸຣຸສ)

໓. **ອສປ຺ປຸຣິສູປນິສ຺ສຍ** ບໍ່ໄດ້ຄົບຫາສມາຄົມກັບສັປບຸຣຸສ

໔. **ອສທ຺ທມ຺ມສ຺ສວນ** ບໍ່ໄດ້ຟັງທັມມ໌ຂອງສັປບຸຣຸສ ໌

໕. **ອຕ຺ຕມິຈ຺ຉາປณิธิ** ຕັ້ງຕົນໄວ້ຜິດ

ເຫຕຸໃຫ້ເກີດ ອໂຍນິໂສມນສິການ ໕ ປຣະການນີ້ ປຣະການທີ່ ໑ ເປັນອດີຕກັມມ໌ສ່ວນທີ່ເຫລືອ ອີກ ໔ ປຣະການ ເປັນປັຈຈຸບັນກັມມ໌

ອກຸສົລຈິຕ ຊຶ່ງມີຈຳນວນ ໑໒ ດວງນັ້ນ ມີຄາຖາສັງຄະຫະ ເປັນຄາຖາທີ່ ໓ ສແດງວ່າ

**໓. ອຕ຺ຖກຸຣາ ໂລກມູລານິ ໂທສມູລານິ ຈ ທ຺ວິຣາ**
**ໂມຫມູລານິ ຈ ເທ຺ວຕິ ທ຺ວາທສາກຸສລາ ສິຍຸ ໆ**

ແປລຄວາມວ່າ ອກຸສົລຈິຕມີ ໑໒ ດວງ ໄດ້ແກ່

- ໂລກມູລຈິຕ ໘
- ໂທສມູລຈິຕ ໒
- ໂມຫມູລຈິຕ ໒

**ໂລກມູລຈິຕ** ເປັນຈິຕທີ່ມີຣາກເງົ້າເຄົ້າມູລເກີດມາຈາກ ຄວາມຢາກໄດ້ ຄວາມຕ້ອງການ ຄວາມກຳຫນັດ ຄວາມເພລິດເພລິນ ຄວາມຕິດໃຈ ຄວາມພໍໃຈໃນອາຣົມຕ໌ ຣວມຄວາມວ່າຈິຕຈຳພວກນີ້ ມີໂລກະເປັນຕົວນຳ

**ໂທສມູລຈິຕ** ເປັນຈິຕທີ່ມີຣາກເງົ້າເຄົ້າມູລເກີດມາຈາກ ຄວາມບໍ່ພໍໃຈ ເສັງໃຈ ກລຸ້ມໃຈ ຣຳຄາญໃຈ ຫງຸດຫງິດ ໂກຣ[1] ຊັງ ຢ້ານ ປຣະທຸສຮ້າຍ ທຳລາຍ ຣວມຄວາມວ່າບໍ່ຢາກໄດ້ໃນອາຣົມຕ໌ນັ້ນ ມີໂທສະເປັນຕົວນຳ

[1] ໂກຣ ອ່ານວ່າ "ໂກດ" (ມຄ ໂກຣ) ບໍ່ພໍໃຈຢ່າງຮຸນແຮງ ເຄືອງໃຈ

**ໂມຫມູລຈິຕ** ເປັນຈິຕທີ່ມີຮາກເງົ້າເຄົ້າມູລເກີດມາຈາກ ຄວາມຫລົງ ຄວາມງົມງາຍ ຄວາມບໍ່ຮູ້ເຫຕຸຜົລຕົ້ນປລາຍ ມີໂມຫະເປັນຕົວນຳ

# ໂລພມູລຈິຕ

**ໂລພມູລຈິຕ** ເປັນຈິຕທີ່ມີຄວາມຢາກໄດ້ເປັນມູລເຫຕຸ ຫຼືເປັນຈິຕທີ່ມີໂລພະເປັນຕົວນຳ ຫຼື ຈະເອີ້ນວ່າ **ໂລພສຫຄຕຈິຕ** ຄືຈິຕທີ່ເກີດພ້ອມດ້ວຍໂລພະກໍໄດ້ ເຫຕຸໃຫ້ເກີດໂລພະມີ ໔ ປຣະການໄດ້ແກ່

**໑. ໂລພປຣິວາຣກມ຺ມປຏິສນ຺ທິກຕາ** ປຏິສົນທິມາດ້ວຍກັມມ໌ທີ່ມີໂລພະເປັນບໍຣິວານ

**໒. ໂລພອຸສ຺ສນ຺ນພວໂຕ ຈວນຕາ** ຈຸຕິມາຈາກພົບທີ່ມີໂລພະມາກ

**໓. ອິຏ຺ຐາຣມ຺ມຕສມາໂຢໂຄ** ໄດ້ປຣະສົບກັບອາຣົມຕ໌ທີ່ດີໆ ຢູ່ເນືອງໆ

**໔. ອສ຺ສາທທສ຺ສນំ** ໄດ້ເຫັນສິ່ງທີ່ເປັນທີ່ພໍໃຈ

ໂລພມູລຈິຕ ຫຼືໂລພສຫຄຕຈິຕ ຊຶ່ງມີຈຳນວນ ໘ ດວງ ຄື

໑. **ໂສມນສ຺ສສຫຄຕំ ທິຏ຺ຐິຄຕສມ຺ປຢຸຕ຺ຕំ ອສງ຺ຂາຣິກំ** ຈິຕໂລພທີ່ເກີດພ້ອມດ້ວຍຄວາມດີໃຈປຣະກອບດ້ວຍຄວາມເຫັນຜິດ ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຊວນ

໒. **ໂສມນສ຺ສສຫຄຕំ ທິຏ຺ຐິຄຕສມ຺ປຢຸຕ຺ຕំ ສສງ຺ຂາຣິກំ** ຈິຕໂລພທີ່ເກີດພ້ອມດ້ວຍຄວາມດີໃຈປຣະກອບດ້ວຍຄວາມເຫັນຜິດ ເກີດຂຶ້ນໂດຍມີສິ່ງຊັກຊວນ

໓. **ໂສມນສ຺ສສຫຄຕំ ທິຏ຺ຐິຄຕວິປ຺ປຢຸຕ຺ຕំ ອສງ຺ຂາຣິກំ** ຈິຕໂລພທີ່ເກີດພ້ອມດ້ວຍຄວາມດີໃຈບໍ່ປຣະກອບດ້ວຍຄວາມເຫັນຜິດ ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຊວນ

໔. **ໂສມນສ຺ສສຫຄຕំ ທິຏ຺ຐິຄຕວິປ຺ປຢຸຕ຺ຕំ ສສງ຺ຂາຣິກំ** ຈິຕໂລພທີ່ເກີດພ້ອມດ້ວຍຄວາມດີໃຈບໍ່ປຣະກອບດ້ວຍຄວາມເຫັນຜິດ ເກີດຂຶ້ນໂດຍມີສິ່ງຊັກຊວນ

໕. **ອຸເປກ຺ຂາສຫຄຕំ ທິຏ຺ຐິຄຕສມ຺ປຢຸຕ຺ຕំ ອສງ຺ຂາຣິກំ** ຈິຕໂລພທີ່ເກີດພ້ອມດ້ວຍຄວາມເສີຍໆປຣະກອບດ້ວຍຄວາມເຫັນຜິດ ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຊວນ

໖. **ອຸເປກ຺ຂາສຫຄຕំ ທິຏ຺ຐິຄຕສມ຺ປຢຸຕ຺ຕំ ສສງ຺ຂາຣິກំ** ຈິຕໂລພທີ່ເກີດພ້ອມດ້ວຍຄວາມເສີຍໆປຣະກອບດ້ວຍຄວາມເຫັນຜິດ ເກີດຂຶ້ນໂດຍມີສິ່ງຊັກຊວນ

໗. **ອຸເປກ຺ຂາສຫຄຕំ ທິຏ຺ຐິຄຕວິປ຺ປຢຸຕ຺ຕំ ອສງ຺ຂາຣິກំ** ຈິຕໂລພທີ່ເກີດພ້ອມດ້ວຍຄວາມເສີຍໆບໍ່ປຣະກອບດ້ວຍຄວາມເຫັນຜິດ ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຊວນ

໘. **ອຸເປກ຺ຂາສຫຄຕំ ທິຏ຺ຐິຄຕວິປ຺ປຢຸຕ຺ຕំ ສສງ຺ຂາຣິກំ** ຈິຕໂລພທີ່ເກີດພ້ອມດ້ວຍຄວາມເສີຍໆບໍ່ປຣະກອບດ້ວຍຄວາມເຫັນຜິດ ເກີດຂຶ້ນໂດຍມີສິ່ງຊັກຊວນ

**ໂລພສຫຄຕຈິຕ ໘ ດວງນີ້ ມີສິ່ງທີ່ຄວຣທຳຄວາມເຂົ້າໃຈຢູ່ ໓ ຄູ່ ຄື**

ຄູ່ທີ່ ໑ **ໂສມນສສສຫຄຕ** ແປລວ່າ ເກີດພ້ອມດ້ວຍຄວາມດີໃຈນັ້ນຕ້ອງເຖິງກັບມີປີຕິ ຄື ຄວາມເອີບອີ່ມໃຈດ້ວຍ **ອຸເປກຂາສຫຄຕ** ແປລວ່າ ເກີດພ້ອມດ້ວຍຄວາມເສີຍໆ ມີຄວາມຫມາຍວ່າດີໃຈພຽງນ້ອຍນຶ່ງພຽງເລັກນ້ອຍ ບໍ່ເຖິງກັບປລື້ມປີຕິເອີບອີ່ມໃຈດ້ວຍເລີຍ

ທັ້ງໂສມນັສແລະອຸເບກຂາ ເປັນເວທນາ ຊຶ່ງເວທນາທັ້ງຫມົດນັ້ນມີ ໕ ຄືສຸຂເວທນາ ທຸກຂເວທນາ ໂສມນັສເວທນາ ໂທມນັສເວທນາ ແລະອຸເບກຂາເວທນາ ແຕ່ໃນໂລກມູລຈິຕນີ້ ມີເວທນາໄດ້ພຽງ ໒ ຄື ໂສມນັສແລະອຸເບກຂາເທົ່ານັ້ນ

ຄູ່ທີ່ ໒ **ທິຕຖິຄຕສມປຢຸຕຕ** ກັບ **ທິຕຖິຄຕວິປປຢຸຕຕ**

ຄຳວ່າ **ທິຕຖິ** ແປລຕາມພຍັຍຊນະ ຄື ຕາມສັພທ໌ ກໍແປລວ່າ **ຄວາມເຫັນ** ບໍ່ເຈາະຈົງວ່າເປັນຄວາມເຫັນຜິດ ຫຼື ຄວາມເຫັນທີ່ຖືກຕ້ອງຕາມສພາພຄວາມເປັນຈິງ ແຕ່ໂດຍອັຖ ຄືຕາມຄວາມຫມາຍແຫ່ງທັມມ໌ແລ້ວ ຖ້າໃຊ້ລອຍໆ ວ່າ **ທິຕຖິ** ເສີຍໆ ກໍຫມາຍເຖິງວ່າເປັນ **ມິຈສາທິຕຖິ** ຄື ຄວາມເຫັນຜິດສເມີໄປ ເວັ້ນໄວ້ແຕ່ໃນທີ່ໃດບົ່ງບອກວ່າເປັນ **ສັມມາທິຕຖິ** ຫຼື **ທິຕຖິວິສຸທຂິ** ຈຶ່ງມີຄວາມຫມາຍວ່າເປັນຄວາມ**ເຫັນຊອບ ເຫັນຖືກຕ້ອງຕາມສພາພແຫ່ງຄວາມເປັນຈິງ**

ທິຕຖິຄຕສັມປຢຸຕຕ ໃນໂລກມູລຈິຕນີ້ ຈຶ່ງຫມາຍເຖິງວ່າປຣະກອບດ້ວຍມິຈສາທິຕຖິໂດຍຕຣົງເລີຍ ເຊັ່ນເຫັນຜິດວ່າ ບາປບໍ່ມີຜົລແຫ່ງການທຳບາປບໍ່ມີ ລັກຊັພຍ໌ເຂົາ ປລົ້ນຊັພຍ໌ເຂົາ ຖ້າບໍ່ຖືໃຈັບຕິດຄຸກ ກໍບໍ່ຕ້ອງຕົກນຣົກຫມົກໄຫມ້ບ່ອນໃດເລີຍ ດັ່ງນີ້ເປັນຕົ້ນ ມີໂມຫະຄືບໍ່ຮູ້ວ່າທຳເຊັ່ນນັ້ນຈະຕ້ອງຕົກນຣົກແລ້ວ ຍັງມີທິຕຖິຄື ອວດຮູ້ວ່າ ບໍ່ມີນຣົກທີ່ຈະຕ້ອງຕົກໄປອີໃດ້ວຍ ຜູ້ທີ່ເຫັນຜິດເຊັ່ນນີ້ຍ່ອມໄດ້ຮັບທຸກຂ໌ຮັບໂທຜຫນັກຫລາຍ ເປັນທັມມດາ ເພາະຍ່ອມກຣະທຳລົງດ້ວຍຄວາມມາດຫມາຍແລະມຸ່ງມັ່ນຢ່າງເຕັມທີ່ ບໍ່ມີຄວາມຄວາມອິດຄວາມທົນປຣະການໃດໆ ເລີຍ ບາງເທື່ອກໍເຖິງກັບທຳເຢີ້ຍໃຫ້ເບິ່ງວ່ານີ້ເຫັນບໍ ບໍ່ເຫັນຕົກນຣົກເລີຍ

ສ່ວນ **ທິຕຖິຄຕວິປປຢຸຕຕ** ຫມາຍພຽງວ່າ ບໍ່ປຣະກອບດ້ວຍຄວາມເຫັນຜິດເທົ່ານັ້ນ ຈະຕ້ອງມີຄວາມເຫັນຖືກດ້ວຍຫຼືບໍ່ນັ້ນບໍ່ໄດ້ກ່າວເຖິງ ກ່າວອີກນັຍນຶ່ງວ່າທຳໄປໂດຍບໍ່ຮູ້ ແຕ່ບໍ່ເຖິງກັບອວດຮູ້ອີໃດ້ວຍ ໂທຜທັຕທ໌ກໍຍ່ອມເບົາແດ່

ຄູ່ທີ່ ໓ **ອສງຂາຣິກ** ແປລວ່າ ເກີດຂຶ້ນໂດຍບໍ່ມີສິ່ງຊັກຊວນ ສ່ວນ **ສສງຂາຣິກ** ແປລວ່າ ເກີດຂຶ້ນໂດຍມີສິ່ງຊັກຊວນ ສິ່ງຊັກຊວນ ຊັກນຳ ຊັກຈູງ ນັ້ນ ຄື **ສັງຂາຣ** ທີ່ແປລກັນຈົນຄຸ້ນຫູວ່າ ປຸງແຕ່ງນັ່ນເອງ "**ສັງຂາຣ**"ໃນທີ່ນີ້ຫມາຍເຖິງ **ກາຍປໂຍຄ ວຈີປໂຍຄ** ແລະ **ມໂນປໂຍຄ**

**ກາຍປໂຍຄ** ການຊັກຊວນ ຊັກນຳ ຊັກຈູງ ດ້ວຍກາຍ ເຊັ່ນ ຈູງມືໄປ ກວັກມືຊີ້ມື ງຶກຫນ້າ ພລິກຕາ ທຳທ່າທາງຕົບຕີ ເປັນຕົ້ນ

**ວຈີປໂຍຄ** ການຊັກຊວນ ຊັກນຳ ຊັກຈູງ ດ້ວຍວາຈາ ເຊັ່ນເວົ້າເກັ້ງກລ່ອ, ຍົກຍ້ອງ ຍຸຍົງ ກຣະທົບກຣະທຽບ ແດໃດັນ ເປັນຕົ້ນ

**ມໂນປໂຍຄ** ການຊັກຊວນ ຊັກນຳ ຊັກຈູງ ດ້ວຍໃຈ ເປັນການນຶກຄິດທາງໃຈກ່ອນ ເຊັ່ນຄິດເຖິງເຣື່ອງສນຸກສນານເພລີດເພລີນ ແລ້ວເກີດຈິຕໂລກຂຶ້ນ ຫຼືຄຶກເຖິງເຣື່ອງບໍ່ດີບໍ່ງາມບໍ່ພໍໃຈຕ່າງ ໆ ກໍບັນດາລໂທສະຂຶ້ນ ເປັນຕົ້ນ

**ອສັງຂາຣິກ** ເປັນການເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຊວນ ຈຶ່ງເປັນຈິຕທີ່ມີກຳລັງເຂັ້ມແຂ້ງ (ຕິກ຺ຂ) ສ່ວນ **ສສັງຂາຣິກ** ນັ້ນ ເກີດຂຶ້ນໂດຍມີສິ່ງຊັກຊວນ ຈຶ່ງເປັນຈິຕທີ່ມີກຳລັງອ່ອນບໍ່ເຂັ້ມແຂ້ງ (ມນ຺ທ)

ເກີດຂຶ້ນໂດຍອາສັຍສິ່ງຊັກຊວນຂອງຕົນເອງ ກໍມີປໂຍຄໄດ້ທັ້ງ ໓ ຄື ທັ້ງກາຍປໂຍຄ ວຈີປໂຍຄ ແລະ ມໂນປໂຍຄ ແຕ່ຖ້າເກີດຂຶ້ນໂດຍອາສັຍສິ່ງຊັກຊວນຂອງຜູ້ອື່ນ ກໍມີປໂຍຄພຽງ ໒ ຄື ກາຍປໂຍຄ ແລະວຈີປໂຍຄເທົ່ານັ້ນ

## ເຫຕຸໃຫ້ເກີດໂສມນັສໃນໂລກມູລຈິຕ

໑. **ໂສມນັສ຺ສປຏິສນ຺ຘິກຕາ** ມີປຏິສົນຘິຈິຕເປັນໂສມນັສ

໒. **ອຄມ຺ພີຣປກຕິຕາ** ບໍ່ມີຄວາມສຸຂຸມຄັມພີຣະພາພ ມີຄວາມຄິດຕື້ນເປັນປົກຕິ ຄື ບໍ່ມີຄວາມຄິດ ນຶກເລິກຊຶ້ງ

໓. **ອິຕ຺ຖາຣມ຺ມຕສມາໂຢໂຄ** ໄດ້ປຣະສົບກັບອາຣົມຕ໌ທີ່ດີ

໔. **ພ຺ຍສນມຸຕ຺ຕິ** ພົ້ນຈາກຄວາມພິນາສ ໕ ປຣະການ

ຄວາມພິນາສ ໕ ປຣະການ ຄື **ຎາຕິພ຺ຍສນ** ຄວາມພິນາສແຫ່ງຎາຕິ, **ໂພຄພ຺ຍສນ** ຄວາມພິນາສແຫ່ງ ຊັພຍ໌ສົມບັຕິ, **ໂຣຄພ຺ຍສນ** ຄວາມພິນາສເພາະໂຣຄພັຍບຽດບຽນ, **ທິຏ຺ຏິພ຺ຍສນ** ຄວາມພິນາສດ້ວຍເຫັນຜິດຈາກທຳນອງຄລອງທັມມ໌ ແລະ **ສີລພ຺ຍສນ** ຄວາມພິນາສດ້ວຍປຣະພຶຕິຜິດສີລທັມມ໌

## ເຫຕຸໃຫ້ເກີດອຸເບກຂາໃນໂລກມູລຈິຕ

໑. ອຸເປກ຺ຂາປຏິສນ຺ຘິກຕາ ມີປຏິສົນຘິຈິຕເປັນອຸເບກຂາ

໒. ຄມ຺ພີຣປກຕິຕາ ມີຄວາມສຸຂຸມຄັມພີຣະພາພ ມີຄວາມເລິກຊຶ້ງເປັນປົກຕິ

໓. ມຊ຺ຊຕ຺ຕາຣມ຺ມຕສມໂຢໂຄ ໄດ້ປຣະສົບກັບອາຣົມຕ໌ທີ່ປານກາງ

໔. ພ຺ຍສນມຸຕ຺ຕິ ພົ້ນຈາກຄວາມພິນາສ ໕ ປຣະການ

໕. ມູຄຘາຕຸກຕາ ມີສັນດານເປັນຄົນໃບ້

## ເຫຕຸໃຫ້ເກີດທິຏ຺ຏິຄຕສັມປຍຸຕຕ

໑. ທິຏ຺ຏິຊ຺ຊາສຍຕາ ມີມິຈສາທິຏ຺ຏິເປັນຈຣິຕອັລຍາສັຍ

໒. ທິຏ຺ຏິວິປນ຺ນປຸຄ຺ຄລເສວນຕາ ມັກຄົບຫາກັບຜູ້ທີ່ເປັນມິຈສາທິຏ຺ຏິ

໓. ສທ຺ທມ຺ມວິມຸຂຕາ ບໍ່ໄດ້ສຶກສາພຣະສັທທັມມ໌

໔. ມິຈ຺ຉາວິຕກ຺ກພຫຸລຕາ ມັກນຶກຄິດແຕ່ເຣື່ອງທີ່ຜິດໆ

໕. ອໂຍນິໂສ ອຸມ຺ມຸຊ຺-ນໍ ຈົມຢູ່ໃນຄວາມພິຈາຣຕາທີ່ບໍ່ແຍບຄາຍ

## ເຫຕຸໃຫ້ເກີດທິຏ຺ຏິຄຕວິປປຍຸຕຕ

໑. ສສ຺ສຕອຸຈເຉທທິຍິອນຊຸຊາສຍຕາ ບໍ່ມີສັສສຕທິຍຖິແລະອຸຈເຉທທິຍຖິເປັນຈຣິຕອັລຍາສັຍ ຄື ບໍ່ເປັນຄົນທິຍຖິຈຣິຕ

໒. ທິຍ຺ຖິວິປ຺ປນ຺ນປຸຄ຺ຄລອເສວນ ບໍ່ຄົບຫາສມາຄົມກັບຄົນມິຈສາທິຍຖິ

໓. ສທ຺ຣມ຺ມສມ຺ມຂຕາ ມຸ່ງໜ້າເຂົ້າຫາພຣະສັທທັມມ໌

໔. ສມ຺ມາວິຕກ຺ກພຫຸລຕາ ຫລາຍໄປດ້ວຍຄວາມຄິດຖືກຄິດແມ່ນ

໕. ອໂຍນິໂສ ນ ອຸມ຺ມຸຊ-ນໍ ບໍ່ຈົມຢູ່ໃນຄວາມພິຈາຣຕາທີ່ບໍ່ແຢບຄາຍ

## ເຫຕຸໃຫ້ເກີດອກຸສົລອສັງຂາຣິກ

໑. ອສງ຺ຂາຣິກ຺ກມ຺ມຊນິຕປຍິສນ຺ຣິກຕາ ມີປຍິສົນຣິຈິຕເກີດຈາກອສັງຂາຣິກ

໒. ກລ຺ລກາຍຈິຕ຺ຕຕາ ມີຄວາມສຸຂກາຍສບາຍໃຈ (ແຂ້ງແຮງ)

໓. ສີຕຸນ຺ຫາທີນໍ ຂມນພຫຸລຕາ ມີຄວາມອົດທົນຕໍ່ຄວາມເຢັນແລະຮ້ອນເປັນຕົ້ນ ຈົນເຄີຍຊິນ

໔. ກຕ຺ຕພ຺ພກມ຺ເມສ຺ ທິຍ຺ຖານິສໍສຕາ ເຫັນຜົລໃນການງານທີ່ຈະກຣະທຳ

໕. ກມ຺ເມສຸ ຈິຕ຺ຕວສີຕາ ມີຄວາມຊຳນາລໃນການງານທີ່ທຳ

໖. ອຸຕ຺ໂກຊນາທິສປ຺ປາຍລາໂກ ໄດ້ຮັບອາກາສດີແລະອາຫານດີ ເປັນຕົ້ນ

ສ່ວນເຫຕຸໃຫ້ເກີດ ອກຸສົລສສັງຂາຣິກ ກໍມີ ໖ ປຣະການ ແລະມີນັຍຕຣົງກັນຂ້າມກັບອກຸສົລອສັງຂາຣິກທີ່ສແດງແລ້ວນີ້

## ໂທສມູລຈິຕ

ໂທສມູລຈິຕ ເປັນຈິຕທີ່ມີຄວາມໂກຣຄວາມຊັງເປັນມູລເຫຕຸ ຫຼື ເປັນຈິຕທີ່ມີໂທສະເປັນຕົວນຳ ຫຼື ຈະເອີ້ນວ່າ **ປຍິພຈິຕ** ຄືຈິຕທີ່ກຣະທົບກຣະທັ່ງອາຣົມຕ໌ທີ່ບໍ່ມັກກໍໄດ້ ແລະເຫຕຸໃຫ້ເກີດໂທສະ ຫຼື ປຍິພະ ມີ ໕ ປຣະການ ໄດ້ແກ່

໑. ໂທສຊຸຊາສຍຕາ ມີອັລຍາສັຍເປັນຄົນມັກໂກຣ

໒. ອຄມ຺ກີຣປກຕິຕາ ມີຄວາມຄິດບໍ່ສຸຂຸ,

໓. ອປ຺ປສຸຕຕາ ມີການສຶກສານ້ອຍ

໔. ອນິຕ຺ຊກາຣມ຺ມຕສມາໂຢໂຄ ໄດ້ປຣະສົບກັບອາຣົມຕ໌ທີ່ບໍ່ດີ

໕. ອາພາຕວຕ຺ຖຸສມາໂຢໂຄ ໄດ້ປຣະສົບອາພາຕວັຕຖຸ ໑໐ ປຣະການ

**ອາພາຕວັຕຖຸ ໑໐ ປຣະການ ຄື**

໑. ອາພາຕເຂົາໂດຍຄິດວ່າ ໄດ້ທຳ ຄວາມເສື່ອມເສັຽແກ່ເຮົາ

໒. ອາພາຕເຂົາໂດຍຄິດວ່າ ກຳລັງທຳ ຄວາມເສື່ອມເສັຽແກ່ເຮົາ

໓. ອາພາຕເຂົາໂດຍຄິດວ່າ ຈະເຮັດ ຄວາມເສື່ອມເສັຽແກ່ເຮົາ

໔. ອາພາດເຂົາໂດຍຄິດວ່າ ໄດ້ທຳ ຄວາມເສື່ອມເສັຽແກ່ຜູ້ທີ່ເຮົາຮັກເຮົາມັກ

໕. ອາພາດເຂົາໂດຍຄິດວ່າ ກຳລັງທຳ ຄວາມເສື່ອມເສັຽແກ່ຜູ້ທີ່ເຮົາຮັກເຮົາມັກ

໖. ອາພາດເຂົາໂດຍຄິດວ່າ ຈະເຮັດ ຄວາມເສື່ອມເສັຽແກ່ຜູ້ທີ່ເຮົາຮັກເຮົາມັກ

໗. ອາພາດເຂົາໂດຍຄິດວ່າ ໄດ້ທຳ ທຳຄຸນທຳປະໂຍຊນ໌ແກ່ຜູ້ທີ່ເຮົາຊັງເຮົາຊັງ

໘. ອາພາດເຂົາໂດຍຄິດວ່າ ກຳລັງທຳ ທຳຄຸນທຳປະໂຍຊນ໌ແກ່ຜູ້ທີ່ເຮົາຊັງເຮົາຊັງ

໙. ອາພາດເຂົາໂດຍຄິດວ່າ ຈະເຮັດ ທຳຄຸນທຳປະໂຍຊນ໌ແກ່ຜູ້ທີ່ເຮົາຊັງເຮົາຊັງ

໑໐. ຄວາມອາພາດເກີດຂຶ້ນໃນຖານະອັນບໍ່ສົມຄວຣ ເຊັ່ນເກີດໂກຣຂຶ້ນເມື່ອສະດຸດຕໍໄມ້ຫຼືຢຽບຫນາ, ເປັນຕົ້ນ

# ໂທສະມູລຈິດ ຫຼື ປະຕິຄະຈິດ ຊຶ່ງມີ ໒ ດວງ ຄື

໑. **ໂທມນສ຺ສສຫຄຕໍ ປຏິຆສມ຺ປຢຸຕ຺ຕໍ ອສງ຺ຂາຣິກໍ** ຈິດເກີດພ້ອມດ້ວຍຄວາມເສັຽໃຈ ປະກອບດ້ວຍຄວາມໂກຣ ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຊວນ

໒. **ໂທມນສ຺ສສຫຄຕໍ ປຏິຆສມ຺ປຢຸຕ຺ຕໍ ສສງ຺ຂາຣິກໍ** ຈິດເກີດພ້ອມດ້ວຍຄວາມເສັຽໃຈ ປະກອບດ້ວຍຄວາມໂກຣ ເກີດຂຶ້ນໂດຍມີສິ່ງຊັກຊວນ

**ໂທສຈິດ ໒ ດວງນີ້ ມີສິ່ງທີ່ຄວຣທຳຄວາມເຂົ້າໃຈບາງປະການ ຄື**

**ໂທມນສ຺ສສຫຄຕໍ** ແປລວ່າ ເກີດພ້ອມດ້ວຍຄວາມເສັຽໃຈ ຄວາມເສັຽໃຈ ຄື ໂທມນັສນີ້ເປັນເວທນາ ຊື່ວ່າ ໂທມນັສເວທນາ ເປັນເວທນາ ໑ ໃນເວທນາ ໕ ໂທມນັສເວທນານີ້ ເກີດໄດ້ພ້ອມກັບໂທສຈິດ ໒ ດວງນີ້ເທົ່ານັ້ນເອງ ຈະເກີດພ້ອມກັບຈິດອື່ນໃດ ຫາໄດ້ບໍ່

**ປຏິຆສມ຺ປຢຸຕ຺ຕໍ** ແປລວ່າ ປະກອບດ້ວຍຄວາມໂກຣ **ປະຕິຄະ** ຄວາມໂກຣນັ້ນອິງຄ໌ທັມມ໌ (ສ່ວນຂອງທັມມ໌) ກໍໄດ້ແກ່ ໂທສະເຈຕສິກ **ປະຕິຄະ** ຫຼື **ໂທສະ**ນີ້ຈະຕ້ອງເກີດພ້ອມກັບໂທມນັສເວທນາຈະເກີດພ້ອມກັບເວທນາອື່ນໃດ ຫາໄດ້ບໍ່

ຕາມທີ່ກ່າວມານີ້ຈະເຫັນໄດ້ວ່າ ໂທມນັສເປັນເວທນາເຈຕສິກມີລັກສະນະສເວີຍອາຣົມຕ໌ທີ່ບໍ່ດີກ່າວໂດຍຂັນ໌ ໕ ກໍເປັນ ເວທນາຂັນ໌ ສ່ວນປະຕິຄະເປັນໂທສະເຈຕສິກມີລັກສະນະດຸຮ້າຍ ຫຍາບຄາຍ ກ່າວໂດຍຂັນ໌ ໕ ກໍເປັນ ສັງຂາຣຂັນ໌ ຊຶ່ງແຕກຕ່າງກັນຢູ່ ເຖິງກະນັ້ນໂທມນັສເວທນາກໍຈະຕ້ອງເກີດກັບປະຕິຄະສເມີ ເພາະເປັນທັມມ໌ທີ່ຈະຕ້ອງເກີດຮ່ວມກັນສ່ວນ ອສັງຂາຣິກ ແລະສສັງຂາຣິກ ແຫ່ງປະຕິຄະຈິດນີ້ ກໍມີຄວາມຫມາຍເປັນທຳນອງດຽວກັນກັບ ອສັງຂາຣິກ ແລະສສັງຂາຣິກ ແຫ່ງໂລກມູລຈິດນັ້ນເອງ

ອີກຢ່າງ ທີ່ໂທສຈິດບໍ່ມີທິຕຖິຄຕສັມປຢຸຕຕ ຄືບໍ່ມີຄວາມເຫັນຜິດປະກອບດ້ວຍນັ້ນ ເພາະໂທສຈິດມີອາຣົມຕ໌ອັນບໍ່ມັກບໍ່ພໍໃຈ ແຕ່ທິຕຖິຄວາມເຫັນຜິດນັ້ນເປັນທີ່ພໍໃຈຕິດໃຈໃນອາຣົມຕ໌ນັ້ນ ຄວາມບໍ່ມັກບໍ່ພໍໃຈ ຈະເກີດພ້ອມກັບຄວາມຕິດໃຈຖືກໃຈ ໃນຂະນະດຽວ ກັນບໍ່ໄດ້ ດັ່ງນັ້ນໂທສຈິດຈຶ່ງບໍ່ມີທິຕຖິປະກອບດ້ວຍ

# ໂມຫມູລຈິຕ

ໂມຫະມູລຈິຕ ເປັນຈິຕທີ່ບໍ່ມີຄວາມຮູ້ ຄວາມຫລົງເປັນມູລເຫຕຸ ຫຼື ເປັນຈິຕທີ່ມີໂມຫະເປັນຕົວນຳ ຈິຕນີ້ເອີ້ນວ່າ ໂມຫະມູລຈິຕ ຄືຈິຕທີ່ປຣະກອບດ້ວຍຄວາມຫລົງກໍໄດ້ ໂມຫະ ຫຼື ອວິຊຊາ ມີຄວາມຫມາຍຢ່າງດຽວກັນ ໃນວິສຸທຣິມັຄຄກ່າວວ່າ ໂມຫະນີ້ເປັນຮາກເຫງົ້າແຫ່ງບາປອກຸສົລທັງມວລ

ເຫຕຸໃຫ້ເກີດໂມຫະນັ້ນໄດ້ແກ່ ອໂຍນິໂສມນສິການ ຄືການພິຈາຣຕາບໍ່ແຍບຄາຍ ພິຈາຣຕາບໍ່ລະອຽດເລີກຊຶ້ງໃຫ້ເຖິງ ສະພາພແຫ່ງອາຣົມຕ໌ນັ້ນໆ ດັ່ງທີ່ໄດ້ກ່າວແລ້ວຕອນເຫຕຸໃຫ້ເກີດອກຸສົລຈິຕ (ທີ່ຫນ້າ ໑໓) ຂໍໃຫ້ເບິ່ງຕອນນັ້ນປຣະກອບດ້ວຍ

**ໂມຫມູລຈິຕ ຫຼື ໂມຫຈິຕ ຊຶ່ງມີຈຳນວນ ໒ ດວງນັ້ນ ຄື**

໑. **ອຸເປກຂາສຫຄຕ໌ ວິຈິກິຈ຺ຉາສມ຺ປຢຸຕ຺ຕ໌** ຈິຕຫລົງເກີດພ້ອມດ້ວຍຄວາມເສີຍໆ ປຣະກອບດ້ວຍຄວາມສົງສັຍ

໒. **ອຸເປກຂາສຫຄຕ໌ ອຸທ຺ທຈ຺ຈສມ຺ປຢຸຕ຺ຕ໌** ຈິຕຫລົງເກີດພ້ອມດ້ວຍຄວາມເສີຍໆ ປຣະກອບດ້ວຍຄວາມຟຸ້ງຊ່ານ

ໂມຫຈິຕ ໒ ດວງນີ້ ມີສິ່ງທີ່ຄວຣທຳຄວາມເຂົ້າໃຈບາງປຣະການດັ່ງຕໍ່ໄປນີ້ ຄື

ຄຳວ່າ **ອຸເປກຂາສຫຄຕ໌** ໃນທີ່ນີ້ ເປັນຄຳດຽວກັບ ອຸເປກຂາສຫຄຕ໌ ໃນໂລກສຫຄຕຈິຕ ຊຶ່ງແປລວ່າ ເກີດພ້ອມກັບ ຄວາມເສີຍໆ ເຫມືອນກັນແຕ່ມີຄວາມຫມາຍແຕກຕ່າງກັນ ເສີຍໃນໂລກມູລຈິຕນັ້ນເສີຍເພາະມີຄວາມຍິນດີເລັກນ້ອຍ ບໍ່ເຖິງກັບ ມີປີຕິເກີດຄວາມປລາບປລື້ມເອີບອີ່ມໃຈ ສ່ວນເສີຍໃນໂມຫມູລຈິຕນີ້ເສີຍເພາະບໍ່ຮູ້

ຄຳວ່າ **ວິຈິກິຈ຺ຉາສມ຺ປຢຸຕ຺ຕ໌** ແປລວ່າ ປຣະກອບດ້ວຍຄວາມສົງສັຍລັງເລບໍ່ແນ່ໃຈ ຕັດສິນລົງໄປບໍ່ໄດ້ ແລະ ຫມາຍສະເພາະ ຄວາມສົງສັຍໃນທັມມ໌ ໘ ປຣະການທີ່ກ່າວຕໍ່ໄປນີ້ເທົ່ານັ້ນ ຄື

໑. ສົງສັຍໃນພຣະພຸທ຺ທເຈົ້າ ໄດ້ແກ່ສົງສັຍໃນພຣະສຣີຣະ (ວ່າເຫັນຈະບໍ່ມີຕົວຈິງ ເປັນຕາຈະສົມມຸຕິຂຶ້ນ) ຫຼື ສົງສັຍໃນພຣະຄຸຕ (ພຣະພຸທ຺ທຄຸຕ ໙)

໒. ສົງສັຍໃນພຣະທັມມ໌ວ່າ ມັຄຄ ໔ ຜົລ ໔ ນິພພານ ໑ ມີຈິງບໍ່! ແລະພຣະທັມມ໌ນີ້ ນຳໃຫ້ອອກຈາກທຸກຂ໌ໄດ້ຈິງບໍ່!

໓. ສົງສັຍໃນພຣະສົງຄ໌ ວ່າສົງຄ໌ທີ່ຕັ້ງຢູ່ໃນມັຄຄ ໔ ຜົລ ໔ ມີຈິງບໍ່! ສົງຄ໌ທີ່ປຕິບັຕິດີມີຈິງ ຫຼື ຜົລແຫ່ງທານທີ່ຖວາຍ ແກ່ສົງຄ໌ມີຈິງບໍ່!

໔. ສົງສັຍໃນສິກຂາ ໓ **(ສີລ ສມາທິ ປັຜຜາ)** ວ່າມີຈິງບໍ່! ຜລານິສົງສ໌ ແຫ່ງການສຶກສາປຕິບັຕິໃນສິກຂາ ໓ ມີຈິງບໍ່!

໕. ສົງສັຍໃນຂັນທ໌ ອາຍຕນະ ທາຕຸ ທີ່ເປັນສ່ວນອດີຕມີຈິງບໍ່! ຄືສົງສັຍວ່າຊາຕິກ່ອນມີຈິງບໍ່! (ອເຫຕຸກທິຜຖິ)

໖. ສົງສັຍໃນຂັນທ໌ ອາຍຕນະ ທາຕຸ ທີ່ເປັນສ່ວນອນາຄົຕມີຈິງບໍ່! ຄືສົງສັຍວ່າຊາຕິຫນ້າມີຈິງບໍ່! (ອຸຈເຉທທິຜຖິ)

ໆ. ສົງສັຍໃນຂັນສ໌ ອາຍະຕະນະ ທາຕຸ ທີ່ເປັນສ່ວນອະດີດແລະອະນາຄົດນັ້ນມີຈິງບໍ່! ຄືສົງສັຍທັ້ງຊາຕິນີ້ແລະຊາຕິຫນ້າມີຈິງບໍ່! (ອກີຣິຍທິຜຖີ)

ໆ. ສົງສັຍໃນ ປະຕິຈຈສະມຸປບາທັມມ໌ ຄື ທັມມ໌ທີ່ເປັນເຫຕຸເປັນຜົລອາສັຍກັນເກີດຂຶ້ນ ຕໍ່ເນື່ອງກັນໄປໂດຍບໍ່ຂາດສາຍເລີຍນັ້ນ ມີຈິງບໍ່! (ອັຕຕາທິຜຖີ)

ສ່ວນຄວາມສົງສັຍຢ່າງອື່ນ ທີ່ບໍ່ແມ່ນສົງສັຍໃນທັມມ໌ ໘ ປະການທີ່ກ່າວມາແລ້ວນີ້ ເຊັ່ນສົງສັຍໃນເຣື່ອງສົມມຸຕິເຣື່ອງບັນຍັຕິ ເປັນຕົ້ນນັ້ນ ເອີ້ນວ່າ **ປະຕິຮູປກວິຈິກິຈສາ** ບໍ່ເປັນກິເລສ

ໂມຫມູລຈິຕທີ່ປະກອບດ້ວຍວິຈິກິຈສານີ້ ເອີ້ນວ່າ ວິຈິກິຈສາສຫຄຕຈິຕ ຫຼື ວິຈິກິຈສາສັມປະຍຸຕຕຈິຕ ຫຼື ວິຈິກິຈສາຈິຕ ກໍໄດ້

ຄຳວ່າ **ອຸທຸຈຈສມ຺ປຍຸຕ຺ຕໍ** ແປລວ່າ ປະກອບດ້ວຍຄວາມຟຸ້ງຊ່ານ ມີຄວາມຫມາຍວ່າ ຈິຕນັ້ນຄິດຟຸ້ງຊ່ານໄປເລື່ອນລອຍໄປ ໃນອາຣົມຕ໌ຕ່າງ ໆ ບໍ່ສງົບຫຼືບໍ່ຕັ້ງມັ່ນຢູ່ໃນອາຣົມຕ໌ດຽວ ຄິດມາກມາຍໄປຫລາຍຢ່າງ ແລະທີ່ຄິດນັ້ນກໍຄິດເລີຍໆ ຄິດໄປເລື້ອຍໆ ບໍ່ມຸ່ງມັ່ນຢ່າງຈິງຈັງໃນສິ່ງທີ່ຄິດນັ້ນເທົ່າໃດນັກ

ໂມຫມູລຈິຕທີ່ປະກອບດ້ວຍອຸທັຈຈະນີ້ ເອີ້ນວ່າ ອຸທັຈຈສຫຄຕຈິຕ ຫຼືອຸທັຈຈສັມປະຍຸຕຕຈິຕ ຫຼື ອຸທັຈຈຈິຕ ກໍໄດ້

ສັງຂາຣເພທ ຄື ປະເພທແຫ່ງສັງຂາຣ ອັນໄດ້ແກ່ ອສັງຂາຣິກ ແລະສສັງຂາຣິກໃນໂມຫມູລຈິຕທັ້ງ ໒ ດວງນີ້ ຕາມປາລີບໍ່ໄດ້ຣະບຸໄວ້

ໃນວິສຸທທິມັຄຄ ແລະໃນອະພິທັມມັດຖະວິກາວນີຕີກາ ກ່າວວ່າຈິຕທີ່ສົງສັຍລັງເລບໍ່ແນ່ໃຈກໍດີ ຈິຕທີ່ຟຸ້ງຊ່ານກໍດີ ເປັນຈິຕທີ່ເວັ້ນຈາກຄວາມກຳຫນັດ ເວັ້ນຈາກຄວາມຂັດເຄືອງ ຊຶ່ງປຣາສຈາກຄວາມເຂັ້ມແຂ້ງແລະຂາດຄວາມອຸສາຫະໃນກິຈການງານໃດໆ ຈຶ່ງບໍ່ມີຄວາມແຕກຕ່າງແຫ່ງສັງຂາຣເພທ

ເທົ່າທີ່ໄດ້ສຶກສາມາ ໄດ້ສົງເຄາະຫ໌ໂມຫມູລຈິຕທັ້ງ ໒ ດວງນີ້ວ່າເປັນອສັງຂາຣິກສົງສັຍເອງຟຸ້ງຊ່ານເອງ

ອີກຢ່າງ ໂມຫມູລຈິຕທັ້ງ ໒ ດວງນີ້ບໍ່ມີທິຜຖິຄວາມເຫັນຜິດ ແລະປະຕິຄະ ຄວາມໂກຣແຕ່ຢ່າງໃດຢ່າງນຶ່ງປະກອບດ້ວຍເລີຍ ກໍເພາະເຫຕຸວ່າໂມຫມູລຈິຕເປັນຈິຕທີ່ ເວັ້ນຈາກຄວາມກຳຫນັດ ແລະເວັ້ນຈາກຄວາມຂັດເຄືອງດັ່ງກ່າວແລ້ວຂ້າງເທິງນີ້ ມີແຕ່ຄວາມບໍ່ຮູ້ ຄື ໂມຫະ ເປັນມູລແຕ່ຢ່າງດຽວເທົ່ານັ້ນ ຈຶ່ງບໍ່ມີທິຜຖິ ຫຼື ປະຕິຄະສັມປະຍຸຕຕດ້ວຍ

# ສັມປະຍຸຕຕໃນອກຸສົລຈິຕ

ໃນອກຸສົລຈິຕທັ້ງ ໑໒ ດວງນີ້ ມີສັມປະຍຸຕຕຣວມ ໔ ປະການ ຄື

໑. ທິຜຖິຄຕສັມປະຍຸຕຕ ໃນໂລກຈິຕທີ່ສັມປະຍຸຕຕດ້ວຍທິຜຖິຣວມ ໔ ດວງ

໒. ປະຕິຄສັມປະຍຸຕຕ ໃນໂທສຈິຕທັ້ງ ໒ ດວງ

໓. ວິຈິກິຈສາສັມປະຍຸຕຕ ໃນໂມຫະຈິຕດວງທີ່ ໑

໔. ອຸທລັຈຈສັມປຢຸຕຕ ລະເພາະຢ່າງຍິ່ງໃນໂມຫະຈິຕດວງທີ່ ໒

# ສິ່ງເຄາະທ໌ອກຸສົລກັມມບົຖກັບອກຸສົລຈິຕ

ອກຸສົລກັມມບົຖ ຄື ທາງແຫ່ງການກະທຳບາປມີ ໑໐ ເອີ້ນອກຸສົລກັມມບົຖ ໑໐ ຫຼື ທຸຈຣິຕ ໑໐ ໄດ້ແກ່

໑. ປາຕາຕິບາຕ ຂ້າສັດວ໌

໒. ອທິນນາທານ ລັກຊັພຍ໌

໓. ກາເມສຸມິຈສາຈາຣ ລ່ວງປະເວນີ

ທຸຈຣິຕ ໓ ປະການນີ້ ຍ່ອມເກີດທາງກາຍທວາຣ ເປັນກາຍກັມມ໌ ໓ ຫຼືກາຍທຸຈຣິຕ ໓

໔. ມຸສາວາທ ເວົ້າຕົວະ

໕. ປິສຸຕາວາທ ເວົ້າສໍ່ສຽດ

໖. ຜຣຸສວາທ ເວົ້າຄຳຫຍາບ

໗. ສັມຜັປປລາປ ເວົ້າເພີ້ເຈີ້ໄຮ້ສາຣະ

ທຸຈຣິຕ ໔ ປະການນີ້ ຍ່ອມເກີດທາງວຈີທວາຣ ເປັນວຈີກັມມ໌ ໔ ຫຼື ວຈີທຸຈຣິຕ ໔

໘. ອພິຊຊາ ຄວາມເພັ່ງເລັງຢາກໄດ້

໙. ພຍາບາທ ຄິດປອງຮ້າຍເຂົາ

໑໐. ມິຈສາທິຜກິ ມີຄວາມເຫັນຜິດ

ທຸຈຣິຕ ໓ ປະການນີ້ ຍ່ອມເກີດທາງມໂນທວາຣ ເປັນມໂນກັມມ໌ ໓ ຫຼື ມໂນທຸຈຣິຕ ໓

ອກຸສົລກັມມບົຖ ໓ ໄດ້ແກ່ **ປາຕາຕິບາຕ ຜຣຸສວາທ ແລະພຍາບາທ** ເກີດຂຶ້ນໂດຍໂທສມູລຈິຕ ອັນມີໂທສະເປັນມູລເຫຕຸຕົວນຳ

**ກາເມສຸມິຈສາຈາຣ ອພິຊຊາ ແລະມິຈສາທິຜກິ** ຣວມ ໓ ປະການເກີດຂຶ້ນໂດຍໂລກມູລຈິຕ ອັນມີໂລກະເປັນມູລເຫຕຸຕົວນຳ

**ອທິນນາທານ ມຸສາວາທ ປິສຸຕາວາທ** ແລະ**ສັມຜັປປລາປ** ຣວມ ໔ ປະການນີ້ ບາງເທື່ອກໍເກີດຂຶ້ນໂດຍໂລກມູລຈິຕ ອັນມີໂລກະເປັນມູລເຫຕຸຕົວນຳ ບາງເທື່ອກໍເກີດຂຶ້ນໂດຍໂທສມູລຈິຕ ອັນມີໂທສະເປັນມູລເຫຕຸຕົວນຳ

ທັ້ງນີ້ຈະເຫັນໄດ້ວ່າ ອກຸສົລກັມມບົຖທັ້ງ ໑໐ ນີ້ ບໍ່ໄດ້ເກີດໂດຍໂມຫມູລຈິຕເລີຍ ແຕ່ເກີດຂຶ້ນໂດຍໂລກມູລຈິຕຫຼືໂທສມູລຈິຕ ແຕ່ຖ້າກ່າວໂດຍມູລເຫຕຸແລ້ວ ໂມຫະເປັນເຫຕຸໃຫ້ເກີດອກຸສົລກັມມບົຖໄດ້ທັ້ງ ໑໐ ປະການ ເພາະເມື່ອໂລກມູລຈິຕ ເກີດຂຶ້ນກໍມີໂມຫະເກີດຂຶ້ນດ້ວຍແລະເມື່ອໂທສຈິຕເກີດຂຶ້ນ ກໍມີໂມຫະເກີດດ້ວຍເຫມືອນກັນ ເພາະໂມຫະເປັນຕາກເຫງົ້າ ແຫ່ງບາປອກຸສົລ ທັ້ງມວລດັ່ງກ່າວແລ້ວ ກ່າວຄື

**ໂລກຈິຕ** ເກີດ ມີໂລກເປັນເຫຕຸນຳ ມີໂມຫະເປັນເຫຕຸໜຸນ

**ໂທສຈິຕ** ເກີດ ມີໂທສະເປັນເຫຕຸນຳ ມີໂມຫະເປັນເຫຕຸໜຸນ

**ໂມຫຈິຕ** ເກີດ ມີໂມຫະເປັນຕົວນຳ ບໍ່ມີຫຍັງເປັນເຫຕຸໜຸນເລີຍ

## ຜົລແຫ່ງໂລກະໂທສະໂມຫະ

ອກຸສົລຈິຕ ຈິຕທີ່ເປັນບາປນີ້ ກ່າວໂດຍ **ເຢພຸຍຍນັຍ** ຄື ກ່າວໂດຍສ່ວນຫລາຍແລ້ວເປັນເຫຕຸໃຫ້ໄດ້ຮັບຜົລດັ່ງນີ້

**ເຢພຸຍ຺ເຢນ ຫິ ສຕ຺ຕາ ຕນ຺ຫາຍ ເປຕ຺ຕິວິສຍ໌ ອຸປ຺ປຊ຺ຊນ຺ຕິ ໆ**

ສັຕວ໌ທັງຫລາຍໂດຍມາກຍ່ອມໄປເກີດເປັນເປຕ ເປັນອສຸຣກາຍ ດ້ວຍອຳນາຈແຫ່ງໂລກະ ອັນມີຄວາມຢາກໄດ້ເປັນມູລຖານ

**ໂທເສນ ຫິ ຈຕ຺ພຊາຕຕາຍ ໂທສສທິສໍ ນິຍໍ ອຸປ຺ປຊ຺ຊນ຺ຕິ ໆ**

ສັຕວ໌ທັງຫລາຍຍ່ອມໄປເກີດໃນນຣົກ ດ້ວຍອຳນາຈແຫ່ງໂທສະ ອັນເປັນທີ່ທໍຣມານສັຕວ໌ໃຫ້ຮ້ອນຮົນເຊັ່ນດຽວກັບສກາວະຂອງໂທສະທີ່ດຸຮ້າຍ ທຳລາຍ ອັນທໍຣມານເຜົາໄຫມ້ຫົວໃຈຢູ່ທຸກຂຕະ

**ໂມເຫນ ຫິ ນິຈ຺ຈສມ຺ມຸຊ຺ຫໍ ຕິຣຈ຺ຈານໂຢນິຍໍ ອຸປ຺ປຊ຺ຊນ຺ຕິ ໆ**

ສັຕວ໌ທັງຫລາຍ ຍ່ອມໄປເກີດເປັນດີຣັຈານ ດ້ວຍອຳນາຈແຫ່ງໂມຫມູລຈິຕ ເພາະເປັນສກາພທີ່ຍັງສັຕວ໌ໃຫ້ລຸ່ມຫລົງງົມງາຍຢູ່ເປັນນິຈ

ອີກນັຍນຶ່ງສແດງວ່າ

- ສມັຍໃດ **ມນຸສຍ໌ມີສັນດານຫລາຍໄປດ້ວຍໂລກະ** ສມຣຽນັ້ນກໍເກີດ **ທຸພ຺ພິກຂນ຺ຕຣາຍ** ອັນຕຣາຍທີ່ເກີດຈາກເຂົ້າຍາກ ຫມາກແພງ ເປັນເຫຕຸໃຫ້ອຶດຢາກລົ້ມຫາຍຕາຍຈາກກັນໄປເປັນຈຳນວນຫລວງຫລາຍ
- ສມັຍໃດ **ມນຸສຍ໌ມີສັນດານຫລາຍໄປດ້ວຍໂທສະ** ສມຣຽນັ້ນກໍເກີດ **ສຕ຺ຖນ຺ຕຣາຍ** ອັນຕຣາຍທີ່ເກີດຈາກສັຕຕາວຸຣຕ່າງ ໆ ເປັນເຫຕຸ ໃຫ້ຂ້າຟັນກັນລົ້ມຫາຍຕາຍຈາກກັນໄປເປັນຈຳນວນຫລວງຫລາຍ
- ສມັຍໃດ **ມນຸສຍ໌ມີສັນດານຫລາຍໄປດ້ວຍໂມຫະ** ສມຣຽນັ້ນກໍເກີດ **ໂຣຄນ຺ຕຣາຍ** ອັນຕຣາຍທີ່ເກີດຈາກໂຣຄກັຍໄຂ້ເຈັບ ເປັນເຫຕຸໃຫ້ເປັນໂຣຄຣະບາດລົ້ມຫາຍຕາຍຈາກກັນໄປເປັນຈຳນວນຫລວງຫລາຍ

## ອກຸສົລຈິຕເປັນທັມມ໌ທີ່ຄວຣລະ

ດັ່ງທີ່ໄດ້ກ່າວມາແລ້ວວ່າ ອກຸສົລຈິຕ ເປັນຈິຕທີ່ຊົ່ວ ທີ່ບາປ ທີ່ມີໂທສແລະໃຫ້ຜົລເປັນທຸກຂ໌ ຈຶ່ງເປັນທັມມ໌ທີ່ຄວຣລະໂດຍແທ້

**ໂລກມູລຈິດ** ເປັນຈິດທີ່ເກີດຈາກຄວາມໂລກ ຄວາມຢາກໄດ້ ຖ້າບໍ່ຣະມັດຣະວັງໄວ້ແດ່ແລ້ວກໍ່ ຈະຍາໃຈິນຫາປະມາຕ ທີ່ສຸດບໍ່ໄດ້ເລີຍ ຈະລະດ້ວຍ **ສນ຺ຕຸຖິ** ຄື **ສັນໂດສ** ຄວາມພໍໃຈເທົ່າທີ່ມີຢູ່ ຄວາມພໍໃຈເທົ່າທີ່ກຳລັງຂອງຕົນຈະຫາໄດ້ ຄວາມພໍໃຈເທົ່າທີ່ຈະຫາໄດ້ໂດຍຊອບທັມມ໌ ພຽງ ໓ ປະການເທົ່ານີ້ ກໍ່ນັບວ່າປະເສີດພໍປະມາຕແລ້ວ

**ໂທສມູລຈິດ** ເປັນຈິດທີ່ເກີດຈາກ**ຄວາມຊັງ ໂກດ ປະທຸສຮ້າຍ ທຳລາຍ** ອັນມີແຕ່ຈະອູ່ວາມກໍ່ໃຫ້ເກີດໂທສນັ້ນເອງ ຈົ່ງລະດ້ວຍເມຕຕາ ໂດຍການພິຈາຣຕາເປັນເນືອງນິຈວ່າ ຕົນຊັງທຸກຂ໌ປະສົງຄ໌ສຸຂຈັ່ງໃດ ຜູ້ອື່ນສັຕວ໌ອື່ນກໍ່ຊັງ ທຸກຂ໌ສແວງສຸຂເຫມືອນຕົນຈັ່ງຊັ້ນ ເຊັ່ນນີ້ກໍ່ຈະຜ່ອນຄລາຍຄວາມບຽດບຽນຊຶ່ງກັນແລະກັນລົງໄປໄດ້ຢ່າງມາກ ໃນສຕິປັຜຖານອັຖກຖາ ສແດງເຫຕຸທີ່ປະຫານໂທສະໄວ້ ໖ ປະການ ຄື

໑. **ເມຕ຺ຕານິມິຕ຺ຕສ຺ສ ອຸຄ຺ຄໂຫ** ສຶກສາໃນເມຕຕານິມິຕ
໒. **ເມຕ຺ຕາກາວນານຸໂຢໂຄ** ປະກອບກາວນາໃນເມຕຕາເນືອງໆ
໓. **ກມ຺ມສກຕາ ປຈ຺ຈເວກ຺ຂຕາ** ພິຈາຣຕາວ່າເປັນກັມມ໌ຂອງຕົນ
໔. **ປຝິສງ຺ຂານ ພຫຸລີກຕາ** ທຳໃຫ້ຫລາຍດ້ວຍປັນຍາ
໕. **ກລ຺ຢາຕມິຕ຺ຕຕາ** ມິມິຕຣ໌ທີ່ດີ (ທີ່ມີເມຕຕາ)
໖. **ສປ຺ປາຍິກຖາ** ໄດ້ຟັງຄຳເວົ້າທີ່ສບາຍ (ເມຕຕາກຖາ)

**ໂມຫມູລຈິດ** ແມ້ຈະບໍ່ປະຈັກສ໌ໂທສໂດຍເດັ່ນຊັດ ແຕ່ກໍ່ມີໂທສຫານ້ອຍບໍ່ປຽບສເມືອນສນິມເຫລັກທີ່ກັດກິນເນື້ອເຫລັກໃຫ້ຜຸລົງທີລະນ້ອຍ ຈົນຂາດຜຸໄປຢ່າງບໍ່ຮູ້ຕົວ ໃນສຕິປັຜຖານອັຖກຖາຈຶ່ງສແດງເຫຕຸທີ່ປະຫານ ໂມຫະໄວ້ດັ່ງນີ້ ຄື

ເຫຕຸທີ່ປະຫານວິຈິກິຈສາ ໖ ປະການ

໑. **ພຫຸສ຺ສຸຕຕາ** ເປັນພຫູສູຕ ໄດ້ຍິນໄດ້ຟັງມາຫລາຍ
໒. **ປຣິປຸຈ຺ຈກຕາ** ຫມັ່ນສອບສວນທວນຄວາມ
໓. **ວິນເຢປກຕຍ຺ຍຸຕາ** ຮອບຮູ້ຊຳນານແລະເຄັ່ງຄັດໃນວິນັຍ
໔. **ອລິໂມກ຺ຂພຫຸລຕາ** ຫລາຍດ້ວຍການຕັດສິນໃຈເຊື່ອ
໕. **ກລ຺ຢາຕມິຕ຺ຕຕາ** ມິມິຕຣ໌ທີ່ດີ
໖. **ສປ຺ປາຍິກຖາ** ໄດ້ຟັງຄຳເວົ້າອັນເປັນທີ່ສບາຍ

## ເຫຕຸທີ່ປະຫານອຸທລັຈຈະ ໖ ປະການ

ເຫຕຸທີ່ປະຫານອຸທຣັຈຈະ ນີ້ກໍ່ເຫມືອນກັບເຫຕຸທີ່ປະຫານວິຈິກິຈສາ ນັ້ນເວັ້ນແຕ່ຂໍ້ ໔ ເປັນດັ່ງນີ້

໔. **ພຸທ຺ຣເສວິຕາ** ໄດ້ຟັງທັມມ໌ຂອງພຣະພຸທຣເຈົ້າເລື້ອຍໆ

ສ່ວນຂໍ້ອື່ນໆ ມີຂໍ້ຄວາມເຫມືອນກັນຫມົດ

# ຈຳແນກອກຸສົລຈິດໂດຍປຣະເພທຕ່າງ ໆ ມີຊາຕິເພທເປັນຕົ້ນ

ໃນບັຣດາຈິດທັງຫມົດນັ້ນ ຍັງຈຳແນກເປັນປຣະເພທຕ່າງ ໆມີຊາຕິເພທເປັນຕົ້ນອີກຕັ້ງ ໙ ປຣະເພທ ຄື

໑. ຊາຕິເພທ ໒. ກູມິເພທ ໓. ເວທນາເພທ

໔. ເຫຕຸເພທ ໕. ສັງຂາຣເພທ ໖. ສັມປຢຸຕຕເພທ

໗. ໂສກຕເພທ ໘. ໂລກເພທ ໙. ຊານເພທ

ແຕ່ລະປຣະເພທມີຄວາມຫມາຍຢ່າງໃດ ຈະໄດ້ກ່າວຕໍ່ໄປນີ້ ພ້ອມກັບສແດງປຣະເພທຕ່າງ ໆ ແຫ່ງອກຸສົລຈິດນັ້ນເລີຍທີດຽວ

໑. **ຊາຕິເພທ** ຈຳແນກຈິດໂດຍປຣະເພທແຫ່ງຊາຕິ ຄືຈິດທັງຫມົດເມື່ອກ່າວໂດຍຊາຕິແລ້ວ ກໍມີ ໔ ຊາຕິ ໄດ້ແກ່ ກ. ອກຸສົລຊາຕິ ຂ. ກຸສົລຊາຕິ ຄ. ວິບາກຊາຕິ ແລະ ງ. ກິຣິຍາຊາຕິ

ກ. **ອກຸສົລຊາຕິ** ຫຼື ຊາຕິອກຸສົລ ຫມາຍເຖິງ ອກຸສົລຈິດ ຊຶ່ງເປັນຈິດທີ່ມີໂທษໃຫ້ຜົລເປັນທຸກຂ໌

ຂ. **ກຸສົລຊາຕິ** ຫຼື ຊາຕິກຸສົລ ຫມາຍເຖິງ ກຸສົລຈິດ ຊຶ່ງເປັນຈິດທີ່ປຣາສຈາກໂທษ ໃຫ້ຜົລເປັນສຸຂ

ຄ. **ວິບາກຊາຕິ** ຫຼື ຊາຕິວິບາກ ຫມາຍເຖິງວິບາກຈິດ ຊຶ່ງເປັນຈິດທີ່ເປັນຜົລຂອງອກຸສົລ ເອີ້ນວ່າ ອກຸສົລວິບາກຈິດ ຈິດທີ່ເປັນຜົລຂອງກຸສົລ ເອີ້ນວ່າ ກຸສົລວິບາກຈິດ

ງ. **ກິຣິຍາຊາຕິ** ຫຼື ຊາຕິກິຣິຍາ ຫມາຍເຖິງ ກິຣິຍາຈິດ ຊຶ່ງເປັນຈິດທີ່ບໍ່ແມ່ນຜົລຂອງອກຸສົລ ບໍ່ແມ່ນຜົລຂອງກຸສົລ ບໍ່ແມ່ນຈິດທີ່ເປັນອກຸສົລ ບໍ່ແມ່ນຈິດທີ່ເປັນກຸສົລແລະເປັນຈິດທີ່ບໍ່ກໍ່ໃຫ້ເກີດອກຸສົລວິບາກ ຫຼືກຸສົລວິບາກແຕ່ຢ່າງໃດເລີຍ ເປັນຈິດທີ່ສັກແຕ່ວ່າກຣະທຳເທົ່ານັ້ນເອງ

ອີກຢ່າງ ວິບາກຊາຕິ ກັບກິຣິຍາຊາຕິ ຣວມເອີ້ນວ່າຊາຕິ **ອພຍາກຕ**[2] ຊຶ່ງມີຄວາມຫມາຍແຕ່ພຽງວ່າ ອພຍາກຕຊາຕິເປັນຊາຕິທີ່ບໍ່ແມ່ນບຸຍແລະບໍ່ແມ່ນບາປເທົ່ານັ້ນ

ສຳຫລັບອກຸສົລຈິດ ໑໒ ດວງ ເປັນຊາຕິອກຸສົລທັງ ໑໒ ດວງ

໒. **ກູມິເພທ** ຈຳແນກຈິດໂດຍປຣະເພທແຫ່ງກູມິ ຄຳວ່າ ກູມິໃນທີ່ນີ້ຫມາຍເຖິງຊັ້ນຂອງຈິດພື້ນເພຂອງຈິດ ຊຶ່ງຈຳແນກເປັນ ໔ ກູມິ ຫຼື ໔ ຊັ້ນດ້ວຍກັນ ຄື ກ. ກາມາວຈຣກູມິ ຂ. ຣູປາວຈຣກູມິ ຄ. ອຣູປາວຈຣກູມິ ແລະ ງ. ໂລກຸຕຕຣກູມິ

ກ. **ກາມາວຈຣກູມິ** ຫມາຍເຖິງຊັ້ນຊັ້ນກາມາວຈຣ ຈິດຊັ້ນກາມ ພື້ນເພຂອງຈິດຕິດຢູ່ໃນກາມຄຸຕ ໃນບັຣດາຈິດທັງຫມົດນັ້ນ ຖືວ່າຈິດນີ້ມີພື້ນເພຕ່ຳກວ່າເພື່ອນເຖິງຈັດວ່າເປັນ ຫີນະ ຄື ເປັນຈິດຊັ້ນຕ່ຳ

---

[2] ອພຍາກຕ ອ່ານວ່າ "ອະພະຍາກະຕະ"

ຂ. **ຣູປາວຈຣຖູມິ** ຫມາຍເຖິງຈິຕຊັ້ນຣູປາວຈຣ ຈິຕຊັ້ນຣູປຊານ ພື້ນເພຂອງຈິຕສູງເຖິງຊັ້ນຣູປພຣົຫ໌ມ ດຳຣົງຢູ່ໃນພຣົຫ໌ມວິຫາຣລັມມ໌ ຈັດເປັນຊັ້ນ **ອຸກັຜກະ** ຊັ້ນອຸກຣິບຜ໌ ຊັ້ນສູງ

ຄ. **ອຣູປາວຈຣຖູມິ** ຫມາຍເຖິງຈິຕຊັ້ນອຣູປາວຈຣ ຈິຕຊັ້ນອຣູປພຣົຫ໌ມ ພື້ນເພຂອງຈິຕລະອຽດອ່ອນເຖິງຊັ້ນ ອຣູປພຣົຫ໌ມຈັດເປັນຊັ້ນ **ອຸກັຜກຕຣະ** ຊັ້ນອຸກຣິບຜ໌ຍິ່ງ ຊັ້ນສູງຍິ່ງ ບັຣດາໂລກິຍຈິຕຄືຈິຕທີ່ຍັງຕ້ອງວົນວຽນຢູ່ໃນວັຜຜະແລ້ວ ຈິຕຊັ້ນນີ້ເປັນຊັ້ນສູງຍິ່ງ ປຣະເສີກຍິ່ງກວ່າໃນຝ່າຍໂລກິຍ

ງ. **ໂລກຸຕຕຣຖູມິ** ຫມາຍເຖິງຈິຕຊັ້ນໂລກຸຕຕຣ ຈິຕຊັ້ນທີ່ໃຫ້ພົ້ນຈາກໂລກໃຫ້ພົ້ນຈາກທຸກຂ໌ ບໍ່ຕ້ອງກັບມາວຽນວ່າຍຕາຍເກີດອີກຕໍ່ໄປເລີຍ ໃນບັຣດາຈິຕທັງຫມົດບໍ່ມີຈິຕຊັ້ນໃນຈະປຣະເສີກສຸດເທົ່າຈິຕຊັ້ນນີ້ໄດ້ເລີຍ ຈັດເປັນຊັ້ນ **ອຸກັຜກຕມະ** ອັນເປັນຊັ້ນປຣະເສີກສຸດຍອດ ຊຶ່ງບໍ່ມີຈິຕໃດຈະປຣະເສີກເທົ່າທຽມເຖິງເລີຍ

ສຳຫລັບອກຸສົລຈິຕ ໑໔ ດວງ ເປັນກາມາວຈຣຖູມິ ຄືເປັນຈິຕໃນຊັ້ນກາມທັງ ໑໔ ດວງ

໓. **ເວທນາເພທ** ໂດຍປຣະເພທແຫ່ງເວທນາ ຄືການສເວີຍອາຣົມຕ໌ ໃນທີ່ນີ້ຈຳແນກຈິຕໂດຍເວທນາ ໕ ອັນໄດ້ແກ່

ສຸຂເວທນາ ເປັນຄວາມສຸຂທາງກາຍ ໑. ທຸກຂເວທນາ ເປັນຄວາມທຸກຂ໌ທາງກາຍ ໑ ໂສມນັສເວທນາ ເປັນຄວາມສຸຂທາງໃຈ ໑ ໂທມນັສເວທນາ ເປັນຄວາມທຸກຂ໌ທາງໃຈ ໑ ແລະອຸເບກຂາເວທນາ ບໍ່ທຸກຂ໌ບໍ່ສຸຂເປັນຄວາມເສີຍໆ ໑

ສຳຫລັບອກຸສົລຈິຕ ໑໔ ດວງ ເກີດພ້ອມກັບເວທນາເຖິງ ໓ ຢ່າງ ຄື ໂສມນັສເວທນາ ໂທມນັສເວທນາ ແລະອຸເບກຂາເວທນາ ມີຣາຍລະອຽດດັ່ງນີ້

**ໂສມນັສເວທນາ** ເກີດແກ່ໂລກມູລຈິຕທີ່ເປັນໂສມນັສ ໔ ດວງ

**ໂທມນັສເວທນາ** ເກີດແກ່ໂທສມູລຈິຕ ໒ ດວງ

**ອຸເບກຂາເວທນາ** ເກີດແກ່ໂລກມູລຈິຕທີ່ເປັນອຸເບກຂາ ໔ ດວງ ແລະໂມຫມູລຈິຕອີກທັງ ໒ ດວງ

ອີກຢ່າງ ມີຂໍ້ທີ່ຄວຣສັງເກຕວ່າ ຈິຕທຸກ ໆ ດວງ (ເວັ້ນແຕ່ໂລກຸຕຕຈິຕ ໘ ດວງ ເທົ່ານັ້ນ) ຊື່ຂອງຈິຕແຕ່ລະດວງໄດ້ຣະບຸບອກ ເວທນາໄວ້ດ້ວຍແລ້ວ ທຳໃຫ້ສດວກແກ່ການຄົ້ນຫາແລະຈື່ຈຳ

໔. **ເຫຕຸເພທ** ໂດຍປຣະເພທແຫ່ງເຫຕຸ ຈຳແນກໄດ້ເປັນ ໒ ຄື ອເຫຕຸກ[3]ແລະສເຫຕຸກ[4]

**ອເຫຕຸກ** ຫມາຍວ່າ ບໍ່ມີສັມປຢຸຕຕເຫຕຸ ຄືບໍ່ມີເຫຕຸປຣະກອບ ແລະເຫຕຸໃນທີ່ນີ້ກໍຫມາຍຈະເພາະເຫຕຸ ໖ ອັນໄດ້ແກ່ **ໂລກເຫຕຸ ໂທສເຫຕຸ ໂມຫເຫຕຸ ອໂລກເຫຕຸ ອໂທສເຫຕຸ** ແລະ **ອໂມຫເຫຕຸ** ດັ່ງນັ້ນອເຫຕຸກຈຶ່ງ ມີຄວາມຫມາຍວ່າ ເປັນຈິຕທີ່ບໍ່ມີເຫຕຸ ໖ ນີ້ປຣະກອບເລີຍແມ້ແຕ່ເຫຕຸດຽວ

[3] **ອເຫຕຸກ** ອ່ານວ່າ "ອະເຫຕຸກະ"

[4] **ສເຫຕຸກ** ອ່ານວ່າ "ສະເຫຕຸກະ"

**ສເຫຕຸກ** ມີຄວາມໝາຍວ່າ ເປັນຈິດທີ່ເປັນສັມປະຍຸດຕະເຫຕຸ ເປັນຈິດທີ່ມີເຫຕຸ ໖ ນັ້ນປະກອບດ້ວຍ ແມ້ວ່າຈະມີເຫຕຸ ໖ ພຽງເຫຕຸດຽວປະກອບ ກໍໄດ້ຊື່ວ່າ ສເຫຕຸກ

ສຳຫລັບອກຸສົລຈິດ ໑໒ ດວງ ເປັນສເຫຕຸກຈິດທັ້ງ ໑໒ ດວງ ມີຣາຍລະອຽດດັ່ງນີ້

**ໂລກມູລຈິຕ ໘ ດວງ** ມີສັມປະຍຸດຕະເຫຕຸ ໒ ເຫຕຸ ຄື ໂລກເຫຕຸກັບໂມຫະເຫຕຸ
**ໂທສມູລຈິຕ ໒ ດວງ** ມີສັມປະຍຸດຕະເຫຕຸ ໒ ເຫຕຸ ຄື ໂທສເຫຕຸກັບໂມຫະເຫຕຸ
**ໂມຫມູລຈິຕ ໒ ດວງ** ມີສັມປະຍຸດຕະເຫຕຸພຽງເຫຕຸດຽວ ຄື ໂມຫະເຫຕຸເທົ່ານັ້ນ

ອີກຢ່າງ ມີຂໍ້ທີ່ຄວຣຮູ້ວ່າສເຫຕຸຈິຕນັ້ນ ຈິຕແຕ່ລະດວງມີສັມປະຍຸດຕະເຫຕຸຢ່າງນ້ອຍພຽງເຫຕຸດຽວ ແຕ່ຢ່າງຫລາຍບໍ່ເກີນ ៣ ເຫຕຸ

໕. **ສັງຂາຣເພທ** ໂດຍປະເພທແຫ່ງສັງຂາຣ ຈຳແນກໄດ້ເປັນ ໒ ຄື ອສັງຂາຣິກ ແລະສສັງຂາຣິກ

**ອສັງຂາຣິກ** ເປັນຈິຕທີ່ເກີດຂຶ້ນເອງ ໂດຍບໍ່ມີສິ່ງຊັກຊວນ
**ສສັງຂາຣິກ** ເປັນຈິຕທີ່ເກີດຂຶ້ນ ເພາະມີສິ່ງຊັກຊວນ

ສຳຫລັບອກຸສົລຈິຕ ໑໒ ດວງ ເປັນ ອສັງຂາຣິກ ໗ ດວງ ໄດ້ແກ່ ໂລກມູລຈິຕທີ່ເປັນອສັງຂາຣິກ ໔ ດວງ ໂທສມູລຈິຕທີ່ເປັນອສັງຂາຣິກ ໑ ດວງ ແລະໂມຫມູລຈິຕອີກ ໒ ດວງ ຊຶ່ງຈັດເປັນອສັງຂາຣິກດ້ວຍ

ເປັນສສັງຂາຣິກ ໕ ດວງ ໂລກມູລຈິຕທີ່ເປັນສສັງຂາຣິກ ໔ ດວງ ແລະໂທສມູລຈິຕທີ່ເປັນສສັງຂາຣິກ ໑ ດວງ

໖. **ສັມປະຍຸດຕະເພທ** ໂດຍປະເພທແຫ່ງສັມປະຍຸດຕ ຈຳແນກໄດ້ເປັນ ໒ ຄື ສັມປະຍຸດຕ ແລະ ວິປປະຍຸດຕສັມປະຍຸດຕະເພທ (ບໍ່ແມ່ນສັມປະຍຸດຕະເຫຕຸ) ໃນຈິຕທັງໝົດນັ້ນ ມີສັມປະຍຸດຕ ໕ ປະການ ຄື

ກ. ທິຽຖິສັມປະຍຸດຕ ປະກອບດ້ວຍຄວາມເຫັນຜິດ
ຂ. ປຕິຄສັມປະຍຸດຕ ປະກອບດ້ວຍຄວາມໂກທ
ຄ. ວິຈິກິຈຊາສັມປະຍຸດຕ ປະກອບດ້ວຍຄວາມລັງເລສົງສັຍ
ງ. ອຸທັຈຈສັມປະຍຸດຕ ປະກອບດ້ວຍຄວາມຟຸ້ງຊ່ານ
ຈ. ຌາຕສັມປະຍຸດຕ ປະກອບດ້ວຍປັຌຌາ

ສ່ວນວິປປະຍຸດຕນັ້ນຖ້າບໍ່ປະກອບດ້ວຍສັມປະຍຸດຕ ກໍເອີ້ນວ່າວິປປະຍຸດຕ

ສຳຫລັບອກຸສົລຈິຕ ໑໒ ດວງ ເປັນທິຽຖິສັມປະຍຸດຕ ໔ ດວງ ໄດ້ແກ່ໂລກມູລຈິຕທີ່ເປັນທິຽຖິຄຕສັມປະຍຸດຕ ໔ ດວງເປັນທິຽຖິວິປະຍຸດຕ ໔ ດວງ ໄດ້ແກ່ໂລກມູລຈິຕທີ່ເປັນທິຽຖິຄຕວິປະຍຸດຕ ໔ ດວງ

ເປັນປຕິຄສັມປະຍຸດຕ ໒ ດວງ ໄດ້ແກ່ ໂທສມູລຈິຕທັ້ງ ໒ ດວງ
ເປັນວິຈິກິຈຊາສັມປະຍຸດຕ ໑ ດວງ ໄດ້ແກ່ ໂມຫມູລຈິຕດວງທີ່ ໑
ເປັນອຸທັຈຈສັມປະຍຸດຕ ໑ ດວງ ໄດ້ແກ່ ໂມຫມູລຈິຕດວງທີ່ ໒

ກ. **ໂສພາຓເພທ** ໂດຍປະເພທແຫ່ງໂສພະນະ ຈຳແນກໄດ້ເປັນ ໒ ຄື **ໂສພະນະ** ແລະ **ອໂສພະນະ**

**ໂສພະນະ** ເປັນຈິຕທີ່ດີງາມ ມີໂສພະນະເຈຕສິກປະກອບ

**ອໂສພະນະ** ບໍ່ໄດ້ໝາຍວ່າເປັນຈິຕທີ່ບໍ່ດີບໍ່ງາມ ແຕ່ໝາຍພຽງວ່າເປັນຈິຕທີ່ບໍ່ມີໂສພະນະເຈຕສິກປະກອບດ້ວຍເທົ່ານັ້ນເອງ

ສຳຫລັບອກຸສົລຈິຕ ໑໒ ດວງ ເປັນອໂສພະນະ ເພາະບໍ່ມີໂສພະນະເຈຕສິກປະກອບດ້ວຍເລີຍທັ້ງ ໑໒ ດວງ

ຄ. **ໂລກເພທ** ໂດຍປະເພທແຫ່ງໂລກ ຈຳແນກໄດ້ເປັນ ໒ ຄື ໂລກິຍະແລະໂລກຸຕຕຣະ

**ໂລກິຍະ** ໝາຍເຖິງຈິຕທີ່ຍັງຂ້ອງຢູ່ໃນ**ກາມໂລກ ຣູປໂລກ ອຣູປໂລກ** ຊຶ່ງຍັງຕ້ອງວົນວຽນຢູ່ໃນ **ກາມພູມິ ຣູປພູມິ ອຣູປພູມິ** ຄືບໍ່ພົ້ນໄປຈາກໂລກທັ້ງ ໓ ຫຼື ພູມິທັ້ງ ໓ ໄດ້

**ໂລກຸຕຕຣະ** ໝາຍເຖິງຈິຕທີ່ພົ້ນຈາກຄວາມຂ້ອງຄວາມຕິດຢູ່ໃນໂລກທັ້ງ ໓ ນັ້ນແລ້ວ ບໍ່ຕ້ອງມາວຽນວ່າຍຕາຍເກີດໃນໂລກທັ້ງ ໓ ໃນພູມິທັ້ງ ໓ ນັ້ນອີກຕໍ່ໄປແລ້ວ

ສຳຫລັບອກຸສົລຈິຕ ໑໒ ດວງ ເປັນໂລກິຍຈິຕທັ້ງ ໑໒ ດວງ ເພາະຍັງບໍ່ພົ້ນໄປຈາກໂລກທັ້ງ ໓ ຫຼື ພູມິທັ້ງ ໓ ເລີຍ

ຌ. **ຌານເພທ** ໂດຍປະເພທແຫ່ງຌານ ຈຳແນກໄດ້ເປັນ ໒ ຄື ຌານ ແລະ ອຌານ

**ຌານ** ໝາຍເຖິງຈິຕທີ່ມີຌານ ຈິຕທີ່ໄດ້ຌານ ຈິຕທີ່ເຖິງຌານ

**ອຌານ** ໝາຍເຖິງຈິຕທີ່ບໍ່ໄດ້ຌານ

ສຳຫລັບອກຸສົລຈິຕ ໑໒ ດວງ ເປັນຈິຕທີ່ບໍ່ແມ່ນຌານຈິຕທັ້ງ ໑໒ ດວງ

## ອເຫຕຸກຈິຕ

**ອເຫຕຸກຈິຕ** ເປັນຈິຕທີ່ບໍ່ມີເຫຕຸ ໝາຍຄວາມວ່າ ຈິຕຈຳພວກນີ້ບໍ່ມີເຫຕຸບາປ ຄື ອກຸສົລເຫຕຸອັນໄດ້ແກ່ **ໂລກເຫຕຸ ໂທສເຫຕຸ ໂມຫເຫຕຸ** ແລະບໍ່ມີເຫຕຸບຸຌ ຄື ກຸສົລເຫຕຸ ອັນໄດ້ແກ່ **ອໂລກເຫຕຸ ອໂທສເຫຕຸ ອໂມຫເຫຕຸ** ຣວມ ໖ ເຫຕຸນີ້ມາ **ສັມປຢຸຕ** ຄືມາປະກອບດ້ວຍເລີຍແມ້ແຕ່ເຫຕຸດຽວ ຫຼືຈະກ່າວອີກນັຍນຶ່ງວ່າ ອເຫຕຸຈິຕເປັນຈິຕທີ່ບໍ່ມີສັມປຢຸຕ ເປັນຈິຕທີ່ບໍ່ມີເຫຕຸ ໖ ປະກອບເລີຍ

**ອເຫຕຸກຈິຕ** ຊຶ່ງມີຈຳນວນ ໑໘ ດວງນີ້ ແບ່ງອອກໄດ້ເປັນ ໓ ຈຳພວກ ດັ່ງມີຄາຖາສັງຄຫະເປັນຄາຖາທີ່ 4 ສແດງວ່າ

4. ສຕ຺ຕາກຸສົລປາການິ ປຸຍ຺ຌປາການິ ອຕ຺ຌາ
ກຸຣິຢຈິຕ຺ຕານິ ຕີຕີຕິ ອຕ຺ຖາຕສ ອເຫຕຸກາ ໆ

ແປລຄວາມວ່າ ອເຫຕຸກຈິຕ ມີ ໑໘ ດວງ ໄດ້ແກ່

ອກຸສົລວິບາກຈິຕ ໗ ດວງ

ອເຫຕຸກກຸສົລວິບາກຈິຕ ໗ ດວງ

ອເຫຕຸກກິຣິຍາຈິຕ ໓ ດວງ

**ອກຸສົລວິບາກຈິຕ** ເປັນຈິຕທີ່ເປັນຜົລຂອງອກຸສົລກັມມ໌ ເປັນຜົລຂອງຝ່າຍຊົ່ວຝ່າຍບາປອກຸສົລ ທີ່ໄດ້ສັ່ງສົມທີ່ໄດ້ກະທຳມາແລ້ວແຕ່ອດີຕ ຈຶ່ງຕ້ອງມາໄດ້ຮັບຜົລເປັນອກຸສົລວິບາກຈິຕ ອັນເປັນຜົລທີ່ບໍ່ດີ ໗ ດວງນີ້

**ອເຫຕຸກກຸສົລວິບາກຈິຕ** ເປັນຈິຕທີ່ເປັນຜົລຂອງກຸສົລກັມມ໌ ເປັນຜົລຂອງຝ່າຍດີຝ່າຍບຸນກຸສົລ ທີ່ໄດ້ສັ່ງສົມທີ່ໄດ້ກະທຳມາແລ້ວໃນອດີຕ ຈຶ່ງມາໄດ້ຮັບຜົລເປັນອເຫຕຸກກຸສົລວິບາກຈິຕ ອັນເປັນຜົລທີ່ດີ ໘ ດວງ

ຈິຕທີ່ເປັນຜົລຂອງອກຸສົລກັມມ໌ ເອີ້ນ **ອກຸສົລວິບາກຈິຕ** ເທົ່ານັ້ນ ແຕ່ຈິຕທີ່ເປັນຜົລຂອງກຸສົລກັມມ໌ເອີ້ນ ອເຫຕຸກກຸສົລວິບາກຈິຕທີ່ແຕກຕ່າງກັນເພາະອກຸສົລວິບາກຈິຕມີແຕ່ໃນປຣະເພທອເຫຕຸກຈິຕ ຊຶ່ງເປັນຈິຕທີ່ບໍ່ມີສັມປຍຸຕຕເຫດດຽວເທົ່ານັ້ນ ອກຸສົລວິບາກຈິຕທີ່ມີສັມປຍຸຕຕນັ້ນບໍ່ມີເລີຍ

ຊຶ່ງຜິດກັບກຸສົລວິບາກເຫຕຸ ເພາະກຸສົລວິບາກຈິຕທີ່ເປັນອເຫຕຸກ ຄືເປັນຈິຕບໍ່ມີສັມປຍຸຕຕເຫຕຸ ເຊັ່ນທີ່ກຳລັງກ່າວເຖິງຢູ່ໃນຂຕະນີ້ກໍ່ມີ ແລະກຸສົລວິບາກຈິຕທີ່ມີສັມປຍຸຕຕເຫຕຸ ຊຶ່ງເອີ້ນວ່າ **ສເຫຕຸຈິຕ** ດັ່ງຈະກ່າວຕໍ່ໄປຂ້າງໜ້ານີ້ກໍ່ມີອີກ ດັ່ງນັ້ນຈຶ່ງຕ້ອງເຕີມອເຫຕຸກໄວ້ດ້ວຍ ເພື່ອຈະໄດ້ຮູ້ໂດຍແຈ້ງຊັດວ່າເປັນກຸສົລວິບາກທີ່ປຣະກອບດ້ວຍເຫຕຸ ຫຼື ຫາບໍ່ໄດ້

**ອເຫຕຸກກິຣິຍາຈິຕ** ເປັນຈິຕບໍ່ແມ່ນຜົລຂອງບາປອກຸສົລ ຫຼື ບຸນກຸສົລແຕ່ຢ່າງໃດ ທັ້ງບໍ່ແມ່ນເປັນຈິຕທີ່ເປັນຕົວກຸສົລ ຫຼື ອກຸສົລດ້ວຍ ເປັນຈິຕທີ່ສັກແຕ່ວ່າກະທຳໄປຕາມໜ້າທີ່ການງານຂອງຕົນເທົ່ານັ້ນເອງ ຈຶ່ງບໍ່ສາມາຖຈະກໍ່ໃຫ້ເກີດຜົລບຸນ ຫຼື ບາປຕໍ່ໄປດ້ວຍ

**ອເຫຕຸກກິຣິຍາຈິຕ** ກໍ່ມີທັ້ງບໍ່ປຣະກອບດ້ວຍເຫຕຸ ດັ່ງທີ່ກ່າວເຖິງຢູ່ໃນຂຕະນີ້ ແລະມີທັ້ງທີ່ປຣະກອບດ້ວຍເຫຕຸ ຄື ສເຫຕຸກ ຊຶ່ງຈະກ່າວຕໍ່ໄປຂ້າງໜ້າອີກດ້ວຍ ດັ່ງນັ້ນຈຶ່ງຕ້ອງເອີ້ນໃຫ້ຊັດເຈນເພື່ອຈະໄດ້ບໍ່ປະປົນກັນ ທຳນອງດຽວກັບກຸສົລວິບາກຈິຕ

## ອກຸສົລວິບາກຈິຕ

ອກຸສົລວິບາກຈິຕ ເປັນຈິຕທີ່ເປັນຜົລຂອງບາປອກຸສົລ ຊຶ່ງມີຈຳນວນ ໗ ດວງນັ້ນ ໄດ້ແກ່

໑. **ອຸເປກ຺ຂາສຫຄຕំ ອກຸສົລວິປາກំ ຈກ຺ຂຸວິຍ຺ຍານំ** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ເຫັນຮູປທີ່ບໍ່ດີ

໒. **ອຸເປກ຺ຂາສຫຄຕំ ອກຸສົລວິປາກំ ໂສຕວິຍ຺ຍານំ** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ໄດ້ຍິນສຽງທີ່ບໍ່ດີ

໓. **ອຸເປກ຺ຂາສຫຄຕំ ອກຸສົລວິປາກំ ຄານວິຍ຺ຍານំ** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ໄດ້ກິ່ນທີ່ບໍ່ດີ

໔. **ອຸເປກ຺ຂາສຫຄຕំ ອກຸສົລວິປາກំ ຊິວ຺ຫາວິຍ຺ຍານំ** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ໄດ້ຣົສທີ່ບໍ່ດີ

໕. **ທຸກ຺ຂສຫຄຕំ ອກຸສົລວິປາກំ ກາຍວິຍ຺ຍານំ** ຈິຕເກີດພ້ອມດ້ວຍທຸກຂເວທນາ ເປັນຜົລຂອງອກຸສົລ ກາຍຖືກຕ້ອງສິ່ງທີ່ບໍ່ດີ

໖. **ອຸເປກ຺ຂາສຫຄຕ຺ ອກຸສລວິປາກ຺ ສມ຺ປຏິຈ຺ຈນຈິຕ຺ຕ຺** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ຮັບອາຣົມຕ໌ທັ້ງ ໕ ທີ່ບໍ່ດີ

໗. **ອຸເປກ຺ຂາສຫຄຕ຺ ອກຸສລວິປາກ຺ ສນ຺ຕີຣຈິຕ຺ຕ຺** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ພິຈາຣຕາ ອາຣົມຕ໌ທັ້ງ ໕ ທີ່ບໍ່ດີ

ອກຸສົລວິປາກຈິຕ ໗ ດວງ ນີ້ ມີສິ່ງທີ່ຄວຣທຳຄວາມເຂົ້າໃຈໃນຂັ້ນຕົ້ນນີ້ບາງປຣະການ ຄື

| | | |
|---|---|---|
| **ຈັກຂຸວິญญาณ** | ຈິຕຮູ້ທາງນັຍນ໌ຕາ | ຄືເຫັນ |
| **ໂສຕວິญญาณ** | ຈິຕຮູ້ທາງຫູ | ຄືໄດ້ຍິນ |
| **ฆานວິญญาณ** | ຈິຕຮູ້ທາງດັງ | ຄືໄດ້ກິ່ນ |
| **ຊິວຫາວິญญาณ** | ຈິຕຮູ້ທາງລີ້ນ | ຄືຮູ້ຣົສ |

ທັ້ງ ໔ ນີ້ເກີດພ້ອມກັບອຸເບກຂາເວທນາ ຄື ຄວາມເສີຍໆ ຢ່າງດຽວ ເສີຍເພາະບໍ່ຮູ້ສຶກເປັນທຸກຂ໌ຫຼືເປັນສຸຂ ເພາະຈິຕເຫລົ່ານີ້ ເກີດຂຶ້ນໂດຍອາສັຍການກຣະທົບກັນຣະຫວ່າງອຸປາທາຍຣູປກັບອຸປາຍທາຍຣູປ ປຽບເຫມືອນສຳລີກຣະທົບສຳລີມີກຳລັງນ້ອຍ ຈຶ່ງບໍ່ກໍ່ເກີດ ເປັນທຸກຂ໌ເປັນສຸຂຫຼືເສັຽໃຈ ດີໃຈແຕ່ຢ່າງໃດເລີຍ

ສ່ວນກາຍວິญญาณ ຈິຕຮູ້ການສັມຜັສຖືກຕ້ອງທາງກາຍນັ້ນສຳຫລັບຝ່າຍອກຸສົລວິປາກທີ່ກຳລັງກ່າວເຖິງຂຕະນີ້ ເກີດພ້ອມກັບ ທຸກຂເວທນາ ເພາະກາຍວິญญาณນີ້ເກີດຂຶ້ນໂດຍອາສັຍການກຣະທົບກັນຣະຫວ່າງມຫາພູຕຣູປ (ຄືຄວາມແຂ້ງຄວາມຮ້ອນ) ກັບ ອຸປາທາຍຣູປ (ຄືກາຍປສາທ) ປຽບເຫມືອນເອົາຄ້ອນຕີສຳລີທີ່ວາງຢູ່ເທິງທັ່ງ ຍ່ອມມີກຳລັງແຮງ ຈຶ່ງກໍ່ໃຫ້ເກີດທຸກຂ໌

## ອເຫຕຸກກຸສົລວິປາກຈິຕ

ອເຫຕຸກກຸສົລວິປາກຈິຕ ເປັນຈິຕທີ່ເປັນຜົລຂອງບຸญກຸສົລ ຊຶ່ງມີຈຳນວນ ໘ ດວງນັ້ນ ໄດ້ແກ່

໑. **ອຸເປກ຺ຂາສຫຄຕ຺ ກຸສລວິປາກ຺ ຈກ຺ຂຸວິญ຺ญาณ຺** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ເຫັນຣູປທີ່ດີ

໒. **ອຸເປກ຺ຂາສຫຄຕ຺ ກຸສລວິປາກ຺ ໂສຕວິญ຺ญาณ຺** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ໄດ້ຍິນສຽງທີ່ດີ

໓. **ອຸເປກ຺ຂາສຫຄຕ຺ ກຸສລວິປາກ຺ ฆานວິญ຺ญาณ຺** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ໄດ້ກິ່ນທີ່ດີ

໔. **ອຸເປກ຺ຂາສຫຄຕ຺ ກຸສລວິປາກ຺ ຊິວ຺ຫາວິญ຺ญาณ຺** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ໄດ້ຣົສທີ່ດີ

໕. **ສຸຂສຫຄຕ຺ ກຸສລວິປາກ຺ ກາຍວິญ຺ญาณ຺** ຈິຕເກີດພ້ອມດ້ວຍສຸຂເວທນາ ເປັນຜົລຂອງກຸສົລ ກາຍໄດ້ສັມຜັສຖືກຕ້ອງສິ່ງທີ່ດີ

໖. **ອຸເປກ຺ຂາສຫຄຕ຺ ກຸສລວິປາກ຺ ສມ຺ປຏິຈ຺ຈນຈິຕ຺ຕ຺** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ຮັບອາຣົມຕ໌ທັ້ງ ໕ ທີ່ດີ

໗. **ອຸເປກ຺ຂາສຫຄຕ຺ ກຸສລວິປາກ຺ ສນ຺ຕີຣຈິຕ຺ຕ຺** ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ພິຈາຣຕາອາຣົມຕ໌ທັ້ງ ໕ ທີ່ດີ

ກ຺. **ໂສມນສ຺ສສຫຄຕ໌ ກຸສລວິປາກໍ ສນ຺ຕີຣິຈິຕ຺ຕ໌** ຈິດເກີດພ້ອມດ້ວຍໂສມນັສເວທນາ ເປັນຜົລຂອງກຸສົລ ພິຈາຣະນາອາຣົມທັງ ໕ ທີ່ດີຍິ່ງ

ອເຫຕຸກກຸສົລວິບາກຈິດ ກ຺ ດວງນີ້ ກໍມີນັຍທຳນອງດຽວກັບອກຸສົລວິບາກຈິດ ໆ ດວງທີ່ກ່າວແລ້ວນັ້ນ ແຕ່ວ່າຈິດຈຳພວກນີ້ ເປັນຜົລຂອງຝ່າຍດີຝ່າຍບຸນກຸສົລເທົ່ານັ້ນເອງ

ອີກຢ່າງ ອເຫຕຸກກຸສົລວິບາກຈິດມີຫລາຍກວ່າ ອກຸສົລວິບາກຈິດ ໑ ດວງ ຄື ໂສມນັສສັນຕີຣິຈິດຊຶ່ງທາງຝ່າຍອກຸສົລວິບາກຈິດ ບໍ່ມີໂທມນັສສັນຕີຣິຈິດເປັນຄູ່ກັນເຫມືອນ ໆ ຄູ່ທຳອິດນັ້ນ ທັງນີ້ກໍເປັນດັ່ງທີ່ກ່າວມາແລ້ວຕອນອກຸສົລຈິດວ່າ ໂທມນັສເວທນານີ້ເກີດໄດ້ກັບໂທສຈິດໂດຍສະເພາະເທົ່ານັ້ນ ຈະເກີດກັບຈິດອື່ນໃດອີກບໍ່ໄດ້ເລີຍ ຖ້າເມື່ອໃດເຖິງກັບໂທມນັສແລ້ວ ກໍເປັນໂທສຈິດເມື່ອນັ້ນ ແລະເມື່ອເປັນໂທສຈິດແລ້ວກໍບໍ່ແມ່ນອເຫຕຸກຈິດ ເພາະໂທສຈິດເປັນສເຫຕຸກຈິດ ຄືເປັນຈິດທີ່ມີເຫຕຸ ແລະມີເຖິງ ໔ ເຫຕຸ ຄື ມີໂທສເຫຕຸເປັນເຫຕຸນຳ ມີໂມຫເຫຕຸເປັນເຫຕຸຫນຸນ ດ້ວຍເຫຕຸຜົລນີ້ຈຶ່ງບໍ່ມີໂທມນັສສັນຕີຣິຈິດໃນອກຸສົລວິບາກຈິດ

# ອເຫຕຸກກິຣິຍາຈິດ

**ອເຫຕຸກກິຣິຍາຈິດ** ເປັນຈິດທີ່ສັກແຕ່ວ່າກຣະທຳ ບໍ່ປຣະກອບດ້ວຍເຫຕຸ ໖ ເປັນຈິດທີ່ບໍ່ເປັນບຸນບໍ່ເປັນບາປ ແລະບໍ່ແມ່ນຜົລຂອງບຸນ ຫຼື ຜົລຂອງບາປດ້ວຍມີຈຳນວນ ໓ ດວງ ໄດ້ແກ່

໑. **ອຸເປກ຺ຂາສຫຄຕ໌ ປຌ຺ຈທ຺ວາຣາວຊ຺ຊນຈິຕ຺ຕ໌** ຈິດທີ່ເກີດພ້ອມດ້ວຍຄວາມເສີຍໆ ພິຈາຣະນາອາຣົມທາງທວາຣທັງ ໕

ມີຄວາມຫມາຍວ່າ ເປັນຈິດທີ່ພິຈາຣະນາອາຣົມທີ່ມາກຣະທົບນັ້ນວ່າເປັນອາຣົມທາງທວາຣໃດ ຈະໄດ້ເປັນປັຈຈັຍໃຫ້ສັນຍາຕແກ່ວິນຍາຕຈິດທາງທວາຣນັ້ນຮັບອາຣົມ ອຸປມາເຫມືອນນາຍທວາຣທີ່ຮັກສາປຣະຕູພຣະຣາຊວັງ ຖ້າເປີດໃຫ້ເຂົ້າຕາມຖານະຂອງບຸຄຄົລນັ້ນໆ

໒. **ອຸເປກ຺ຂາສຫຄຕ໌ ມໂນທ຺ວາຣາວຊ຺ຊນຈິຕ຺ຕ໌** ຈິດທີ່ເກີດພ້ອມດ້ວຍຄວາມເສີຍໆ ພິຈາຣະນາອາຣົມທາງມໂນທວາຣ

ມີຄວາມຫມາຍວ່າ ຈິດນີ້ທຳຫນ້າທີ່ຕັດສິນອາຣົມທັງ ໕ ທາງທວາຣ ໕ ແລະມີຫນ້າທີ່ພິຈາຣະນາອາຣົມທັງ ໖ ທີ່ເກີດທາງມໂນທວາຄືທາງໃຈນຶກຄິດໂດຍຕຣົງດ້ວຍ

໓. **ໂສມນສ຺ສສຫຄຕ໌ ຫສິຕຸປ຺ປາທຈິຕ຺ຕ໌** ຈິດທີ່ຍິ້ມແຍ້ມຂອງພຣະອຣຫັນຕ໌ ເກີດພ້ອມດ້ວຍຄວາມໂສມນັສ

ມີຄວາມຫມາຍວ່າ ຈິດດວງນີ້ເປັນຈິດຍິ້ມແຍ້ມຂອງພຣະອຣຫັນຕ໌ທັງຫລາຍໂດຍສະເພາະ ບຸຄຄົລອື່ນທີ່ມິແມ່ນພຣະອຣຫັນຕ໌ ບໍ່ໄດ້ຍິ້ມແຍ້ມດ້ວຍຈິດດວງນີ້ ແຕ່ຍິ້ມແລະຫົວລໍ້ດ້ວຍຈິດດວງອື່ນ ຊຶ່ງຈະຂໍກ່າວເຖິງຕໍ່ເມື່ອໄດ້ສແດງການຈິດຄົບຈຳນວນຫມົດທັງ ໕໔ ດວງແລ້ວ

**ຫສິຕຸປປາທຈິດ** ນີ້ບາງແຫ່ງກໍເອີ້ນວ່າ **ຫສນຈິດ** (ອ່ານວ່າ ຫະສະນະຈິດ)

# ສັງຂານເພດແຫ່ງອເຫຕຸກຈິຕ

ໃນອເຫຕຸກຈິຕທັງ ໑໘ ດວງນີ້ ບາໄດ້ບໍ່ງບອກຫຼືຣະບຸໄວ້ວ່າເປັນອສັງຂາຣິກຫຼື ສສັງຂາຣິກແຕ່ຢ່າງໃດບໍ່ ຈຶ່ງມີອາທະທີ່ກ່ຽວກັບສັງຂານເພດແຫ່ງອເຫຕຸກຈິຕນີ້ຮວມໄດ້ເປັນ ໓ ນັຍຄື

ກ. ໃນມູລຜິກາ ແລະໃນວິກາວນີຜິກາ ກ່າວວ່າເປັນສັງຂານວິມຸຕຕິທັງ ໑໘ ດວງ ທັງນີ້ເພາະປາລິບໍ່ໄດ້ຣະບຸໄວ້ເລີຍວ່າເປັນອສັງຂາຣິກ ຫຼື ສສັງຂາຣິກ ເມື່ອບໍ່ໄດ້ສແດງໄວ້ເລີຍເຊັ່ນນີ້ແລ້ວ ກໍຕ້ອງຖືວ່າເປັນສັງຂານວິມຸຕຕິ ພົ້ນຈາກຄວາມເປັນອສັງຂາຣິກ ຫຼື ສສັງຂາຣິກ

ຂ. ໃນປຣມັຕຖທີປນີຜິກາ ກ່າວວ່າເປັນສັງຂານໄດ້ທັງ ໒ ຢ່າງ ທັງ ໑໘ ດວງ ເຊັ່ນໃນເວລາທີ່ຈະຕາຍ ອາຈຈະມີຜູ້ນຶ່ງຜູ້ໃດຊັກຈູງແນະນຳໃຫ້ເບິ່ງພຣະພຸທຣູປເປັນຕົ້ນກໍໄດ້

ຄ. ສ່ວນໂບຮາຕາຈາຣຍ໌ກ່າວວ່າ ເປັນອສັງຂາຣິກທັງ ໑໘ ດວງ ເພາະເຫັນເອງໄດ້ຍິນເອງ

ເທົ່າທີ່ໄດ້ສຶກສາມາ ໄດ້ສົງເຄາະຫ໌ອເຫຕຸກຈິຕທັງ ໑໘ ດວງນີ້ວ່າເປັນ ອສັງຂາຣິກເຫັນຈະເປັນດ້ວຍເຫຕຸວ່າ ເມື່ອມີອຸປປັຕຕິເຫຕຸແລ້ວ ອເຫຕຸກຈິຕນີ້ຍ່ອມເກີດຂຶ້ນເອງ ແມ້ຈະມີຜູ້ໃດຊັກຈູງແນະນຳຊີ້ຊວນໃຫ້ເບິ່ງ ແຕ່ຖ້າອຸປປັຕຕິເຫຕຸມີບໍ່ຄົບອົງຄ໌ກໍບໍ່ເຫັນບໍ່

ອຸປປັຕຕິເຫຕຸແຫ່ງອເຫຕຸກຈິຕ ມີດັ່ງຕໍ່ໄປນີ້

# ອຸປປັຕຕິເຫຕຸແຫ່ງອເຫຕຸກຈິຕ

**ອເຫຕຸກຈິຕ** ເປັນຈິຕທີ່ບໍ່ມີເຫຕຸ ໖ ຄື **ໂລກເຫຕຸ ໂທສເຫຕຸ ໂມຫເຫຕຸ ອໂລກເຫຕຸ ອໂທສເຫຕຸ** ແລະ**ອໂມຫເຫຕຸ** ປະກອບດ້ວຍເລີຍ ແຕ່ວ່າ ອເຫຕຸກຈິຕເຫລົ່ານີ້ຈະເກີດຂຶ້ນໄດ້ກໍຕ້ອງມີເຫຕຸ ເຫຕຸທີ່ໃຫ້ເກີດຂຶ້ນນີ້ມີຊື່ວ່າ ອຸປປັຕຕິເຫຕຸ ທີ່ເຮົາເອີ້ນກັນວ່າ ອຸບັຕິເຫຕຸ ບໍ່ແມ່ນເຫຕຸ ໖ ແຕ່ເປັນເຫຕຸໃຫ້ເກີດ ອຸບັຕິເຫຕຸນັ້ນມີດັ່ງນີ້

**ອຸປປັຕຕິເຫຕຸໃຫ້ເກີດ ຈັກຂຸວິญญາຕຈິຕ**

໑. ຈັກຂຸປສາທ ມີປຣະສາທຕາດີ ມີນັຍນ໌ຕາດີ

໒. ຣູປາຣົມຕ໌ ມີຣູປ ຄືສີຕ່າງ ໆ

໓. ອາໂລກະ ມີແສງສວ່າງ

໔. ມນສິການ ມີຄວາມສົນໃຈ (ປັญຈທວາຣວັຊຊນະ)

**ອຸປປັຕຕິເຫຕຸໃຫ້ເກີດ ໂສຕວິญญາຕຈິຕ**

໑ ໂສຕປສາທ ມີປຣະສາທຫູດີ

໒. ສັທທາຣົມຕ໌ ມີສຽງ

໓. ວິວຣາກາສ ມີຊ່ອງວ່າງຂອງຫູ (ມີອາກາສ)

໔. ມນສິການ ມີຄວາມສົນໃຈ (ປັໝຈທວາຣາວັຊຊນະ)

ອຸປປັຕຕິເຫຕຸໃຫ້ເກີດ ຆານວິໝຸາຕຈິຕ

໑. ຆານປສາທ ມີປຣະສາທດັງດີ

໒. ຄັນຘາຣົມຕ໌ ມີກິ່ນ

໓. ວາໂຢຘາຕຸ ມີຘາຕຸລົມ

໔. ມນສິການ ມີຄວາມສົນໃຈ (ປັໝຈທວາຣາວັຊຊນະ)

**ອຸປປັຕຕິເຫຕຸໃຫ້ເກີດ ຊິວຫາວິໝຸາຕຈິຕ**

໑. ຊິວຫາປສາທ ມີປຣະສາທລີ້ນດີ

໒. ຣສາຣົມຕ໌ ມີຣົສ

໓. ອາໂປຘາຕຸ ມີຘາຕຸນ້ຳ

໔. ມນສິການ ມີຄວາມສົນໃຈ (ປັໝຈທວາຣວັຊຊນະ)

**ອຸປປັຕຕິເຫຕຸໃຫ້ເກີດ ກາຍວິໝຸາຕຈິຕ**

໑. ກາຍປສາທ ມີປຣະສາທກາຍດີ

໒. ໂຜຏຖັພພາຣົມຕ໌ ມີແຂ້ງ ອ່ອນ ຮ້ອນ ເຢັນ ຫຍ່ອນ ຕຶງ

໓. ຖັທຘປຖວີ ມີປຖວີຘາຕຸທີ່ມີລັກຫນະແຂ້ງ

໔. ມນສິການ ມີຄວາມສົນໃຈ (ປັໝຈທວາຣາວັຊຊນະ)

໑. ອຸເປກຂາສຫຄຕໍ ອກຸສົລວິປາກໍ ຈກຂຸວິຍຸໝານໍ ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ເຫັນຮູປທີ່ບໍ່ດີ

໒. ອຸເປກຂາສຫຄຕໍ ກຸສົລວິປາກໍ ຈກຂຸວິຍຸໝານໍ ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ເຫັນຮູປທີ່ດີ

໓. ອຸເປກຂາສຫຄຕໍ ອກຸສົລວິປາກໍ ໂສຕວິຍຸໝານໍ ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ໄດ້ຍິນສຽງທີ່ບໍ່ດີ

໔. ອຸເປກຂາສຫຄຕໍ ກຸສົລວິປາກໍ ໂສຕວິຍຸໝານໍ ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ໄດ້ຍິນສຽງທີ່ດີ

໕. ອຸເປກຂາສຫຄຕໍ ອກຸສົລວິປາກໍ ຆານວິຍຸໝານໍ ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ໄດ້ກິ່ນທີ່ບໍ່ດີ

໖. ອຸເປກຂາສຫຄຕໍ ກຸສົລວິປາກໍ ຆານວິຍຸໝານໍ ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ໄດ້ກິ່ນທີ່ດີ

໗. ອຸເປກຂາສຫຄຕໍ ອກຸສົລວິປາກໍ ຊິວຫາວິຍຸໝານໍ ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງອກຸສົລ ໄດ້ຣົສທີ່ບໍ່ດີ

໘. ອຸເປກຂາສຫຄຕໍ ກຸສົລວິປາກໍ ຊິວຫາວິຍຸໝານໍ ຈິຕເກີດພ້ອມດ້ວຍຄວາມເສີຍໆ ເປັນຜົລຂອງກຸສົລ ໄດ້ຣົສທີ່ດີ

໙. ທຸກຂສຫຄຕໍ ອກຸສົລວິປາກໍ ກາຍວິຍຸໝານໍ ຈິຕເກີດພ້ອມດ້ວຍທຸກຂເວທນາ ເປັນຜົລຂອງອກຸສົລ ກາຍຖືກຕ້ອງສິ່ງທີ່ບໍ່ດີ

໑໐. ສຸຂສຫຄຕံ ກຸສລວິປາກໍ ກາຍວິຍຸຍານໍ ຈິຕເກີດພ້ອມດ້ວຍສຸຂເວທນາ ເປັນຜົລຂອງກຸສົລ ກາຍໄດ້ສັມຜັສຖືກຕ້ອງສິ່ງທີ່ດີ

ຈັກຂຸວິນຍາຕຈິຕ ໒ ດວງ ໂສຕວິນຍາຕຈິຕ ໒ ດວງ ພານວິນຍາຕຈິຕ ໒ ດວງ ຊິວຫາວິນຍາຕຈິຕ ໒ ດວງ ແລະກາຍວິນຍາຕຈິຕ ໒ ດວງ ຣວມຈິຕ ໑໐ ດວງນີ້ເອີ້ນວ່າ ທວິປັນຈວິນຍາຕ

**ອຸປປັຕຕິເຫຕຸໃຫ້ເກີດ ມໂນຣາຕຸ**

໑. ປັນຈທວາຣ ໄດ້ແກ່ທວາຣທັ້ງ ໕ ຄື ຕາ ຫູ ດັງ ລີ້ນ ແລະກາຍ

໒. ປັນຈາຣົມຕ໌ ໄດ້ແກ່ອາຣົມຕ໌ທັ້ງ ໕ ຄື ຣູປ ສຽງ ກິ່ນ ຣົສ ແລະ ໂຜຜັຖັພພະ

໓. ຫທຍວັຕຖຸ ໄດ້ແກ່ ຫທຍວັຕຖຸຣູປ ອັນເປັນທີ່ອາສັຍເກີດແຫ່ງຈິຕແລະເຈຕສິກ

໔. ມນສິການ ມີຄວາມສົນໃຈ

ມໂນຣາຕຸ ຫມາຍເຖິງຈິຕ ໓ ດວງ ອັນໄດ້ແກ່ ປັນຈທວາຣາວັຊຊນຈິຕ ໑ ດວງ ແລະ ສັມປຜິຈຉນຈິຕ ໒ ດວງ

**ອຸປປັຕຕິເຫຕຸໃຫ້ເກີດ ມໂນວິນຍາຕຣາຕຸ**

໑. ມໂນທວາຣ ໄດ້ແກ່ ກວັງຄຈິຕ ໑໙ ດວງ

໒. ອາຣົມຕ໌ ໖ ໄດ້ແກ່ ຣູປ ສຽງ ກິ່ນ ຣົສ ໂຜຜັຖັພພະ ແລະ ທັມມາຣົມຕ໌

໓. ຫທຍວັຕຖຸ ໄດ້ແກ່ ຫທຍວັຕຖຸ ຫຼືບໍ່ມີຫທຍວັຕຖຸຣູປກໍໄດ້

໔. ມນສິການ ມີຄວາມສົນໃຈ

ມໂນວິນຍາຕຣາຕຸ ກ່າວລະເພາະໃນອເຫຕຸກຈິຕນີ້ ກໍຫມາຍເຖິງຈິຕ ໕ ດວງ ອັນໄດ້ແກ່ ສັນຕີຈິຕ ໓ ດວງ ມໂນທວາຣາວັຊຊນຈິຕ ໑ ດວງ ແລະ ຫສິຕຸປປາທຈິຕ ໑ ດວງ

ອີກຢ່າງ ເພື່ອກັນຄວາມສົງສັຍ ຈິຕທັ້ງຫມົດມີ ໘໙ ຫຼື ໑໒໑ ດວງນັ້ນ ເມື່ອຫັກທວິປັນຈວິນຍາຕ ໑໐ ແລະ ມໂນຣາຕຸ ໓ ຣວມ ໑໓ ດວງອອກແລ້ວ ຈະເຫລືອ ໗໖ ດວງ ຫຼື ໑໐໘ ດວງ ຈິຕທີ່ເຫລືອທັ້ງຫມົດນີ້ເອີ້ນວ່າ **ມໂນວິນຍາຕຣາຕຸ**ທັ້ງນັ້ນ

ອຸບັຕິເຫຕຸ ຄືເຫຕຸໃຫ້ເກີດຈິຕຕ່າງ ໆ ທີ່ກ່າວມານີ້ ແຕ່ລະຈິຕກໍຕ້ອງມີອຸບັຕິເຫຕຸຄົບທັ້ງ ໔ ຢ່າງ ຈິຕນັ້ນໆ ຈຶ່ງຈະເກີດຂຶ້ນໄດ້ ຖ້າຂາດໄປຢ່າງໃດແມ້ແຕ່ສັກຢ່າງດຽວ ຈິຕນັ້ນໆ ກໍຈະເກີດບໍ່ໄດ້ເລີຍ

ໃນອັຍຖສາລິນີອັຖກຖາ ແລະໃນວິສຸທຣິມັຄຄ ໄດ້ອຸປມາວິນຍາຕທັ້ງ ໖ ໄວ້ວ່າ

ຕາ ເຫມືອນງູ ມັກຊອກຊອນໄປໃນທີ່ລີ້ລັບ ນັຍນ໌ຕາກໍຊອບສອດສ່າຍຢາກເຫັນສິ່ງທີ່ປົກປິດ

ຫູ ເຫມືອນແຂ້ ມັກວັງນ້ຳວົນທີ່ເຢັນໆ ຫູກໍຊອງຟັງຄຳເວົ້າທີ່ອ່ອນຫວານ

---

[5] **ກວັງຄຈິຕ** ອ່ານວ່າ "ພະວັງຄະຈິຕ"

ດັງ ເໝືອນນົກ ມັກໂບຍບິນໄປໃນອາກາສ ດັງມັກສູດມັກດົມກິ່ນທີ່ລອຍລົມໂຊຍມາ

ລີ້ນ ເໝືອນສຸນັຂ ມັກນໍ້າລາຍໄຫລສເມີ ລີ້ນກໍ່ຢາກຊີມຣົສຢູ່ທຸກເມື່ອ

ກາຍ ເໝືອນສຸນັຂຈິ້ງຈອກ ມັກອົບອຸ່ນ

ໃຈ ເໝືອນລີງ ມັກຢູ່ມາສຸຂ ຂີ້ດີ້ຢູ່ເລື່ອຍ

## ທວາຣຂອງອເຫຕຸກຈິຕ

ຈັກຂຸວິญญາຕ ໒ ດວງ ອາສັຍເກີດທາງ ຈັກຂຸທວາຣ

ໂສຕວິญญາຕ ໒ ດວງ ອາສັຍເກີດທາງ ໂສຕທວາຣ

ຄານວິญญາຕ ໒ ດວງ ອາສັຍເກີດທາງ ຄານທວາຣ

ຊິວຫາວິญญາຕ ໒ ດວງ ອາສັຍເກີດທາງ ຊິວຫາທວາຣ

ກາຍວິญญາຕ ໒ ດວງ ອາສັຍເກີດທາງ ກາຍທວາຣ

ປັญຈທວາຣາວັຊຊນຈິຕ ໑ ດວງ ສັມປຕິຈຉນຈິຕ ໒ ດວງ ຮວມຈິຕ ໓ ດວງນີ້ອາສັຍເກີດທາງປັญຈທວາຣ ຄື ທາງທວາຣ ໕ ໄດ້ແກ່ ຈັກຂຸທວາຣ ໂສຕທວາຣ ຄານທວາຣ ຊິວຫາທວາຣ ແລະກາຍທວາຣ

ມໂນທວາຣາວັຊຊນຈິຕ ໑ ດວງ ສັນຕີຣິຈິຕ ໓ ດວງ ແລະ ຫສິຕຸປາທຈິຕ ໑ ດວງ ຮວມ ໕ ດວງນີ້ ອາສັຍເກີດທາງທວາຣ ໖ ຄື ຈັກຂຸທວາຣ ໂສຕທວາຣ ຄານທວາຣ ຊິວຫາທວາຣ ກາຍທວາຣ ແລະມໂນທວາຣ

## ວັຕຖຸຂອງອເຫຕຸກຈິຕ

ຈັກຂຸວິญญາຕ ໒ ດວງ ອາສັຍເກີດທີ່ ຈັກຂຸວັຕຖຸ

ໂສຕວິญญາຕ ໒ ດວງ ອາສັຍເກີດທີ່ ໂສຕວັຕຖຸ

ຄານວິญญາຕ ໒ ດວງ ອາສັຍເກີດທີ່ ຄານວັຕຖຸ

ຊິວຫາວິญญາຕ ໒ ດວງ ອາສັຍເກີດທີ່ ຊິວຫາວັຕຖຸ

ກາຍວິญญາຕ ໒ ດວງ ອາສັຍເກີດທີ່ ກາຍວັຕຖຸ

ຈິຕທີ່ເຫລືອອີກ ໘ ດວງ ໄດ້ແກ່ ສັມປຕິຈຉນຈິຕ ໒ ດວງ ສັນຕີຣິຈິຕ ໓ ດວງ ອເຫຕຸກກິຣິຍາຈິຕ ໓ ດວງ ນັ້ນ ອາສັຍຫທຍວັຕຖຸເກີດ

---

[6] **ຫສິຕຸປາທຈິຕ** ອ່ານວ່າ "ຫະສິຕຸປາທະຈິຕ"

# ອາຣົມຕ໌ຂອງອເຫຕຸກຈິຕ

ຈັກຂຸວິນຍານ ໒ ດວງ ຮູ້ອາຣົມຕ໌ຄື ຮູປາຣົມຕ໌ ຮູປຕ່າງ ໆ

ໂສຕວິນຍານ ໒ ດວງ ຮູ້ອາຣົມຕ໌ຄື ສັທທາຣົມຕ໌ ສຽງຕ່າງ ໆ

ຆານວິນຍານ ໒ ດວງ ຮູ້ອາຣົມຕ໌ຄື ຄັນທາຣົມຕ໌ ກິ່ນຕ່າງ ໆ

ຊິວຫາວິນຍານ ໒ ດວງ ຮູ້ອາຣົມຕ໌ຄື ຣສາຣົມຕ໌ ຣົສຕ່າງ ໆ

ກາຍວິນຍານ ໒ ດວງ ຮູ້ອາຣົມຕ໌ຄື ໂຜຜຖັພພາຣົມຕ໌ ແຂ້ງ ອ່ອນ ຮ້ອນ ເຢັນ

ປັນຈທວາຣາວັຊຊນຈິຕ ໑ ດວງ ສັມປຕິຈຈນຈິຕ ໒ ດວງ ຣວມ ໓ ດວງນີ້ ຮູ້ປັນຈາຣົມຕ໌ ຄື ຮູ້ອາຣົມຕ໌ ໕ ອັນໄດ້ແກ່ ຮູປ ສຽງ ກິ່ນ ຣົສ ໂຜຜຖັພພະ

ມໂນທວາຣາວັຊຊນຈິຕ ໑ ດວງ ສັນຕີຣຈິຕ ໓ ດວງ ແລະຫສິຕຸປາທ ໑ ດວງ ຣວມຈິຕ ໕ ດວງນີ້ ຮູ້ອາຣົມຕ໌ ໖ ຄື ຮູ້ປັນຈາຣົມຕ໌ ແລທັມມາຣົມຕ໌ ທັມມ໌ຕ່າງ ໆ

# ສແດງອເຫຕຸກຈິຕ ໑໗ ໂດຍວິຖີຈິຕ

| | | |
|---|---|---|
| ໑. ອຕີຕພວັງຄ<br>໒. ພວັງຄຈລນະ<br>໓. ພວັງຄຸປັຈເຊທະ | ພວັງຄເກົ່າ<br>ພວັງຄໄຫວ<br>ພວັງຄຂາດ | ຣວມ ໓ ດວງນີ້ ເປັນພວັງຄຈິຕແລະເປັນວິບາກ |
| ໔. ປັຍຈທວາຣາວັຊຊນະ | ເປັນປັຍຈທວາຣາວັຊຊນຈິຕ ໑ ດວງ ພິຈາຣຕາອາຣົມຕ໌ທີ່ມາກຣະທົບ | |
| ໕. ປັຍຈວິຍຍາຕ | ເປັນທວິປັຍຈວິຍຍາຕ ໑໐ ດວງ ດວງໃດດວງນຶ່ງຕາມຄວຣແກ່ການຮັບຮູ້ອາຣົມຕ໌ທີ່ມາກຣະທົບນັ້ນ | |
| ໖. ສັມປຕິຈຈນະ | ເປັນສັມປຕິຈຈນຈິຕ ໒ ດວງ ດວງໃດດວງນຶ່ງຮັບອາຣົມຕ໌ທີ່ປັຍຈວິຍຍາຕຮູ້ແລ້ວນັ້ນ ຕົກທອດໃຫ້ແກ່ສັນຕີຣຕະ | |
| ໗. ສັນຕີຣຕະ | ເປັນສັນຕີຣຕະຈິຕ ໓ ດວງ ດວງໃດດວງນຶ່ງໄຕ່ສວນອາຣົມຕ໌ວ່າຊົ່ວຫຼືດີ | |
| ໘. ໂວຍທັພພນະ | ເປັນມໂນທວາຣາວັຊຊນຈິຕ ໑ ດວງ ທຳຫນ້າທີ່ຕັດສິນອາຣົມຕ໌ແລະກຳຫນົດໃຫ້ເປັນ ອກຸສົລ ກຸສົລ ຫຼື ກິຣິຍາ | |
| ໙. ຊວນະ<br>໑໐. ຊວນະ<br>໑໑. ຊວນະ<br>໑໒. ຊວນະ<br>໑໓. ຊວນະ<br>໑໔. ຊວນະ<br>໑໕. ຊວນະ | ຈິຕທີ່ເສພອາຣົມຕ໌ ຄື ສຳເຣັຈກິຈເປັນອກຸສົລ ກຸສົລ ຫຼື ກິຣິຍາ ກ່າວໂດຍລະເພາະໃນອເຫຕຸກຈິຕນີ້ ຊວນະ ກໍໄດ້ແກ່ຫສິຕຸປປາທຈິຕ ໑ ດວງ ເປັນຜູ້ເສພອາຣົມຕ໌ໃຫ້ສຳເຣັຈກິຈເປັນກິຣິຍາ | |
| ໑໖. ຕທາລັມພຕະ<br>໑໗. ຕທາລັມພຕະ | ເປັນສັນຕີຈິຕ ໓ ດວງ ດວງໃດດວງນຶ່ງ ຮັບຮູ້ອາຣົມຕ໌ທີ່ເຫລືອຈາກຊວນະ | |

ຄົບ ໑໗ ແລ້ວ ຈິຕກໍເປັນພວັງຄ ຕໍ່ໄປໃຫມ່ອີກ

ວິຖີຈິຕນີ້ມີສແດງໂດຍລະອຽດໃນປຣິຈເຊທທີ່ ໔ ໃນທີ່ນີ້ຍົກມາກ່າວໂດຍຫຍໍ້ພໍໃຫ້ຮູ້ເຄົ້າ ເພື່ອຈະໄດ້ເຂົ້າໃຈ ອເຫຕຸກຈິຕດີຂຶ້ນອີກແດ່

# ຈຳແນກອເຫຕຸກຈິຕໂດຍປຣະເພທຕ່າງ ໆ ມີຊາຕິເພທເປັນຕົ້ນ

໑. **ຊາຕິເພທ** ໂດຍປຣະເພທແຫ່ງຊາຕິ ອເຫຕຸກຈິຕມີ ໒ ຊາຕິ ຄື ອກຸສົລວິບາກຈິຕ ໗ ດວງ ອເຫຕຸກກຸສົລວິບາກຈິຕ ໘ ດວງ ຣວມຈິຕ ໑໕ ດວງນີ້ ເປັນຊາຕິວິບາກ

*ອເຫຕຸກກິຣິຍາຈິຕ ໓ ດວງ ເປັນຊາຕິກິຣິຍາ*

໒. **ພູມິເພທ** ໂດຍປຣະເພທແຫ່ງພູມິ ອເຫຕຸກຈິຕເປັນກາມາວຈຣພູມິຢ່າງດຽວທັ້ງ ໑໘ ດວງ

໓. **ເວທນາເພທ** ໂດຍປຣະເພທແຫ່ງເວທນາ ອເຫຕຸກຈິຕ ໑໘ ດວງ ມີເວທນາເຖິງ ໔ ຢ່າງຄື

**ສຸຂເວທນາ** ໄດ້ແກ່ສຸຂກາຍ ໑ ດວງ ຄື ສຸຂສຫຄຕໍ ກຸສົລວິປາກໍ ກາຍວິຍຍານໍ

**ທຸກຂເວທນາ** ໄດ້ແກ່ທຸກຂ໌ກາຍ ໑ ດວງ ຄື ທຸກຂສຫຄຕໍ ອກຸສົລວິປາກໍ ກາຍວິຍຍານໍ

**ໂສມນັສເວທນາ** ໄດ້ແກ່ ໂສມນັສສັນຕີຈິຕ ໑ ດວງ (ຄື ໂສມນັສສຫຄຕໍ ກຸສົລວິປາກໍ ສນ຺ຕີຈິຕ຺ຕໍ) ແລະ ຫສິຕຸປປາທຈິຕ ໑ ດວງ ຣວມ ໒ ດວງ

**ອຸເປກຂາເວທນາ** ໄດ້ແກ່ຈິຕທີ່ເຫລືອອີກ ໑໔ ດວງ ຄື ທວິປັຍຈວິຍຍານ ໘ (ເວັ້ນກາຍວິຍຍານ ໒) , ສັມປະຕິຈສນຈິຕ ໒, ອຸເປກຂາສັນຕີຈິຕ ໒, ປັຍຈທວາຣາວັຊຊນຈິຕ ໑ ແລະມໂນທວາຣາວັຊຊຈິຕ ໑

໔. **ເຫຕຸເພທ** ໂດຍປຣະເພທແຫ່ງເຫຕຸ ອເຫຕຸກຈິຕນີ້ເປັນຈິຕທີ່ບໍ່ມີສັມປະຍຸຕຕເຫຕຸ ນັ້ນ ໑໘ ດວງຈຶ່ງໄດ້ຊື່ວ່າ ອເຫຕຸກຈິຕ

໕. **ສັງຂາຣເພທ** ໂດຍປຣະເພທແຫ່ງສັງຂາຣ ອເຫຕຸກຈິຕສົງເຄາະຫ໌ວ່າເປັນອສັງຂາຣິກ ທັ້ງ ໑໘ ດວງ

໖. **ສັມປະຍຸຕຕເພທ** ໂດຍປຣະເພທແຫ່ງສັມປະຍຸຕຕ ອເຫຕຸກຈິຕເປັນວິປປະຍຸຕຕທັ້ງ ໑໘ ດວງເພາະບໍ່ມີ ທິຍຖິ ປະຕິພະ ວິຈິກິຈຊາ ອຸທັຈຈະ ຫຼືຍານມາສັມປະຍຸຕຕດ້ວຍເລີຍ

໗. **ໂສກຓເພທ** ໂດຍປຣະເພທແຫ່ງໂສກຓະ ອເຫຕຸກຈິຕເປັນອໂສກຓະທັ້ງ ໑໘ ດວງ ເພາະອເຫຕຸກຈິຕບໍ່ມີໂສກຓເຈຕສິກປຣະກອບດ້ວຍເລີຍ

໘. **ໂລກເພທ** ໂດຍປຣະເພທແຫ່ງໂລກ ອເຫຕຸກຈິຕເປັນໂລກິຍະ ທັ້ງ ໑໘ ດວງ

໙. **ຊານເພທ** ໂດຍປຣະເພທແຫ່ງຊານ ອເຫຕຸກຈິຕເປັນອຊານທັ້ງ ໑໘ ດວງ

# ໂສກຓຈິຕ ກັບ ອໂສກຓຈິຕ

ຈິຕທັ້ງຫມົດຊຶ່ງມີຈຳນວນໂດຍສັງເຂປ ໂດຍຫຍໍ້ ໘໙ ດວງ ຫຼື ໂດຍພິສດາຣ ໑໒໑ ດວງນັ້ນ ຍັງຈຳແນກເປັນໂສກຓຈິຕ ແລະອໂສກຓຈິຕ ດັ່ງມີຄາຖາສັງຄຫະເປັນຄາຖາທີ່ ໕ ສແດງວ່າ

໕. ປາປາເຫຕຸກມຸຕ຺ຕານິ ໂສກຓານີຕິ ວຸຈ຺ຈເຣ
ເອກູນສຕ຺ຖິ ຈິຕ຺ຕານິ ອເຖກນວຸຕີປີ ວາ ຯ

ແປລຄວາມວ່າ ຈິຕ ໕໙ ດວງ (ໂດຍສັງເຂປ) ຫຼືຈິຕ ໙໑ ດວງ (ໂດຍພິສດາຣ) ຊຶ່ງພົ້ນຈາກ ອກຸສົລຈິຕ ແລະອເຫຕຸກຈິຕ ນັ້ນເອີ້ນວ່າ **ໂສภຫຈິຕ**

ມີຄວາມຫມາຍວ່າ ອກຸສົລຈິຕ ໑໒ ດວງ ອເຫຕຸກຈິຕ ໑໘ ດວງ ຣວມຈິຕ ໓໐ ດວງນີ້ ເອີ້ນວ່າ **ອໂສภຫຈິຕ**

ກາມາວຈໂສภຫຈິຕ ໒໔, ຣູປາວຈຣຈິຕ ໑໕, ອຣູປາວຈຣຈິຕ ໑໒, ໂລກຸຕຕຈິຕ ໂດຍຫຍໍ້ ໘ ຫຼື (ໂດຍພິສດາຣ) ໔໐ ດວງ, ຣວມຈຳນວນໂດຍຫຍໍ້ ໕໙ ຫຼື ໂດຍພິສດາຣ ໙໑ ດວງນີ້ ເອີ້ນວ່າ **ໂສภຫຈິຕ**

ໂສภຫຈິຕເປັນຈິຕທີ່ດີງາມໂດຍແທ້ ເປັນຈິຕທີ່ມີໂສภຫເຈຕສິກປຣະກອບ (ເຈຕສິກເປັນທັມມຊາຕິປຣະເภທນຶ່ງ ຊຶ່ງປຣະກອບຈິຕ ປຸງແຕ່ງຈິຕໃຫ້ຈິຕປຣະພຶຕິເປັນໄປຕາມນັ້ນ ເຈຕສິກນີ້ມີສແດງໂດຍລະອຽດໃນປຣິຈເฉທທີ່ ໒)

ສ່ວນ **ອໂສภຫຈິຕ** ບໍ່ໄດ້ຫມາຍຄວາມວ່າ ເປັນຈິຕທີ່ບໍ່ດີງາມ ເພາະພຣະອຣຫັນຕ໌ກໍຍັງມີອເຫຕຸກຈິຕຊຶ່ງເປັນອໂສภຫຈິຕຢູ່ ຈະກລາຍເປັນວ່າພຣະອຣຫັນຕ໌ຍັງຄົງມີຈິຕທີ່ບໍ່ດີງາມຢູ່ອີກ ຊຶ່ງ

ຄວາມເປັນຈິງຫາບໍ່ເປັນເຊັ່ນນັ້ນ ເພຣະພຣະອຣຫັນຕ໌ເປັນຜູ້ທີ່ຫມົດກິເລສທັ້ງປວງແລ້ວ ເປັນຜູ້ທີ່ມີຈິຕໃຈຂາວສະອາດ ບໍຣິສຸທຣ໌ຫມົດຈົດແລ້ວ ຫາມີຈິຕໃຈອັນບໍ່ດີບໍ່ງາມເຫລືອຢູ່ເລີຍແມ້ແຕ່ນ້ອຍ ດັ່ງນັ້ນ **ອໂສภຫຈິຕ** ຈຶ່ງມີຄວາມຫມາຍແຕ່ພຽງວ່າ ເປັນຈິຕທີ່ບໍ່ມີໂສภຫເຈຕສິກປຣະກອບ

## ກາມາວຈໂສภຫຈິຕ

**ກາມາວຈໂສภຫຈິຕ** ເປັນຈິຕທີ່ແມ້ວ່າຍັງຕ້ອງທ່ອງທ່ຽວວົນວຽນຢູ່ໃນກາມภູມິ ແຕ່ກໍເປັນໄປໃນຝ່າຍທີ່ດີງາມ ບໍ່ບຽດບຽນຫຼືກໍ່ຄວາມເດືອດຮ້ອນໃຫ້ແກ່ຕົນເອງແລະຜູ້ອື່ນ ມີຄາຖາສັງຄຫະເປັນຄາຖາທີ່ ໕ ສແດງວ່າ

ໜ. ເວທນາຍາຕສງ຺ຂາຕ ເภເທນ ຈຕຸວີສຕີ
ສເຫຕຸກາມາວຈຣ ປຸຍ຺ຍປາກກ຺ຣິຢາ ມຕາ ໆ

ແປລຄວາມວ່າ ຈິຕ ໒໔ ດວງ ກ່າວໂດຍປຣະເภທແຫ່ງ ເວທນາ ຍາຕ ແລະ ສັງຂາຣ ນັ້ນເອີ້ນວ່າ ສເຫຕຸກກາມາວຈຣກຸສົລຈິຕ ສເຫຕຸກກາມາວຈຣວິປາກຈິຕແລະສເຫຕຸກກາມາວຈຣກິຣິຍາຈິຕ

ມີຄວາມຫມາຍວ່າ ກ່າວໂດຍເວທນາເภທ ໂດຍປຣະເภທເວທນານັ້ນ ທາງຝ່າຍໂສภຫຈິຕທັ້ງປວງ ມີເວທນາໄດ້ພຽງ ໒ ຄື ໂສມນັສເວທນາ ແລະອຸເປກຂາເວທນາ ເທົ່ານັ້ນ

ກ່າວໂດຍຍາຕເภທ ໂດຍປຣະເภທແຫ່ງຍາຕ ຄືປັຍຍາແລ້ວ ກໍມີພຽງ ໒ ໄດ້ແກ່ ຍາຕສັມປຢຸຕຕ ຫມາຍວ່າຈິຕນັ້ນປຣະກອບດ້ວຍປັຍຍາ ຫຼື ມີປັຍຍາ ສ່ວນຍາຕວິປປຢຸຕ ຫມາຍວ່າ ຈິຕນັ້ນບໍ່ປຣະກອບດ້ວຍປັຍຍາ ຫຼືຈິຕນັ້ນບໍ່ໄດ້ໃຊ້ປັຍຍາ

ກ່າວໂດຍສັງຂາຣເภທ ໂດຍປຣະເภທແຫ່ງສັງຂາຣ ກໍຫມາຍໃນທີ່ນີ້ວ່າເປັນອສັງຂາຣິກ ບໍ່ມີສິ່ງຊັກຊວນ ແລະສສັງຂາຣິກ ມີສິ່ງຊັກຊວນ

ສເຫຕຸກນິຄວາມໝາຍວ່າມີສັມປະຍຸຕຕເຫຕຸ ຄື ມີເຫຕຸປຣະກອບ ສເຫຕຸກຈິຕທີ່ເປັນຝ່າຍໂສກາຕກໍມີ ອໂລກເຫຕຸ ອໂທສເຫຕຸ ອໂມຫເຫຕຸ ປຣະກອບຕາມຄວຣແກ່ທີ່ຈະປຣະກອບໄດ້ ດັ່ງຈະໄດ້ກ່າວຕໍ່ໄປ

ສເຫຕຸກກາມາວຈຣກຸສົລຈິຕ ເອີ້ນວ່າ ກາມກຸສົລຈິຕ ຫຼື ມຫາກຸສົລຈິຕກໍໄດ້

ສເຫຕຸກກາມາວຈຣວິບາກຈິຕ ເອີ້ນວ່າ ກາມວິບາກຈິຕ ຫຼື ມຫາວິບາກຈິຕກໍໄດ້

ສເຫຕຸກກາມາວຈຣກິຣິຍາຈິຕ ເອີ້ນວ່າ ກາມກິຣິຍາຈິຕ ຫຼື ມຫາກິຣິຍາຈິຕກໍໄດ້

# ມຫາກຸສົລຈິຕ

ມຫາກຸສົລຈິຕ ເອີ້ນວ່າ ມຫາກຸສົລເສີຍໆ ກໍໄດ້ ທີ່ວ່າເປັນມຫາກຸສົລ ເພາະ

ກ. ເປັນກຸສົລຈິຕທີ່ກວ້າງຂວາງມາກມາຍມີໄດ້ທົ່ວໄປ ກ່າວຄືສັຕວ໌ໃນອບາຍ (ສັຕວ໌ນຣົກ ສັຕວ໌ເປຕ ສັຕວ໌ອສຸຣກາຍ ແລະສັຕວ໌ດີຣັຈສານ) **ມນຸສຍ໌ ເທວດາ ຕລອດຈົນຣູປພຣົຫ໌ມ ອຣູປພຣົຫ໌ມ** ສາມາຖທີ່ຈະມີມຫາກຸສົລ ຫຼື ປຣະກອບກັມມ໌ອັນເປັນ **ມຫາກຸສົລ**ນີ້ໄດ້

ຂ. ເປັນທີ່ຕັ້ງຂອງກຸສົລທັ້ງປວງ ແລະຍັງເປັນປັຈຈັຍກໍໃຫ້ເກີດກຸສົລສານຈິຕ ມັຄຄຈິຕ ຜົລຈິຕ ທັ້ງເປັນປັຈຈັຍໃຫ້ເຖິງຊຶ່ງພຣະນິພພານໄດ້ນໍາ

# ມຫາກຸສົລມີ ໘ ດວງ ໄດ້ແກ່

໑. **ໂສມນສ̣ສສຫຄຕ̣ ຸ ສາຕສມ̣ປຍຸຕ̣ຕ̣ ອສງ̣ຂາຣິກ̣** ມຫາກຸສົລດວງທີ່ ໑ ເກີດພ້ອມດ້ວຍຄວາມຍິນດີ ປຣະກອບດ້ວຍປັນຍາ ເປັນອສັງຂາຣິກ ຄື ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

໒. **ໂສມນສ̣ສສຫຄຕ̣ ສາຕສມ̣ປຍຸຕ̣ຕ̣ ສສງ̣ຂາຣິກ̣** ມຫາກຸສົລດວງທີ່ ໒ ເກີດພ້ອມດ້ວຍຄວາມຍິນດີ ປຣະກອບດ້ວຍປັນຍາ ເປັນສສັງຂາຣິກ ຄື ເກີດຂຶ້ນໂດຍມີສິ່ງຊັກຈູງ

໓. **ໂສມນສ̣ສສຫຄຕ̣ ສາຕວິປ̣ປຍຸຕ̣ຕ̣ ອສງ̣ຂາຣິກ̣** ມຫາກຸສົລດວງທີ່ ໓ ເກີດພ້ອມດ້ວຍຄວາມຍິນດີ ບໍ່ປຣະກອບດ້ວຍປັນຍາ ເປັນອສັງຂາຣິກ ຄື ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

໔. **ໂສມນສ̣ສສຫຄຕ̣ ສາຕວິປ̣ປຍຸຕ̣ຕ̣ ສສງ̣ຂາຣິກ̣** ມຫາກຸສົລດວງທີ່ ໔ ເກີດພ້ອມດ້ວຍຄວາມຍິນດີ ບໍ່ປຣະກອບດ້ວຍປັນຍາ ເປັນສສັງຂາຣິກ ຄື ເກີດຂຶ້ນໂດຍມີສິ່ງຊັກຈູງ

໕. **ອຸເປກ̣ຂາສຫຄຕ̣ ສາຕສມ̣ປຍຸຕ̣ຕ̣ ອສງ̣ຂາຣິກ̣** ມຫາກຸສົລດວງທີ່ ໕ ເກີດພ້ອມດ້ວຍຄວາມເສີຍໆ ປຣະກອບດ້ວຍປັນຍາ ເປັນອສັງຂາຣິກ ຄື ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

໖. **ອຸເປກ̣ຂາສຫຄຕ̣ ສາຕສມ̣ປຍຸຕ̣ຕ̣ ສສງ̣ຂາຣິກ̣** ມຫາກຸສົລດວງທີ່ ໖ ເກີດພ້ອມດ້ວຍຄວາມເສີຍໆ ປຣະກອບດ້ວຍປັນຍາ ເປັນສສັງຂາຣິກ ຄື ເກີດຂຶ້ນໂດຍມີສິ່ງຊັກຈູງ

ໆ. **ອຸເປກ຺ຂາສຫຄຕ໌ ຌາຓວິປ຺ປຍຸຕ຺ຕ໌ ອສງ຺ຂາຣິກໍ** ມະຫາກຸສົລດວງທີ່ ໆ ເກີດພ້ອມດ້ວຍຄວາມເສີຍໆ ບໍ່ປະກອບດ້ວຍປັນຍາ ເປັນອສັງຂາຣິກ ຄື ເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ໆ. **ອຸເປກ຺ຂາສຫຄຕ໌ ຌາຓວິປ຺ປຍຸຕ຺ຕ໌ ສສງ຺ຂາຣິກໍ** ມະຫາກຸສົລດວງທີ່ ໆ ເກີດພ້ອມດ້ວຍຄວາມເສີຍໆ ບໍ່ປະກອບດ້ວຍປັນຍາ ເປັນສສັງຂາຣິກ ຄື ເກີດຂຶ້ນໂດຍມີສິ່ງຊັກຈູງ

## ອັຖແຫ່ງກຸສົລ

**ກຸສົລຈິຕ** ເປັນຈິຕທີ່ບໍ່ເສົ້າຫມອງ ບໍ່ຮ້ອນຣົນ ເປັນຈິຕທີ່ດີງາມ ທີ່ສລາດ ທີ່ສະອາດ ທີ່**ປຣາສຈາກໂທສ ແລະໃຫ້ຜົລເປັນສຸຂ** ມີອັຖ ໕ ປະການ ຄື

໑. **ອາໂຣຄຍຕ຺ຖ** ບໍ່ມີໂຣຄ ຄືບໍ່ມີຕາລະເປັນຕົ້ນ ຕາລະ ໂທສະ ໂມຫະ ນີ້ເອີ້ນວ່າ ໂຣຄເພາະສຽດແທງຈິຕສັນດານຂອງສັຕວ໌ທັ້ງຫລາຍ

໒. **ສຸນ຺ທຕ຺ຖ** ດີງາມ ຄື ເປັນປຣະໂຍຊນ໌ເກື້ອກູລແກ່ສັຕວ໌ທັ້ງຫລາຍ

໓. **ເສກຕ຺ຖ** ສລາດ ຮຽບຮ້ອຍ ຄືຜູ້ທີ່ມີຈິຕໃຈເປັນກຸສົລຍ່ອມມີກິຣິຍາວາຈາສຸພາພຮຽບຮ້ອຍ

໔. **ອນວຊ຺ຊຕ຺ຖ** ບໍ່ມີໂທສອັນຄວຕິຕຽນໄດ້

໕. **ສຸຂວິປາກຕ຺ຖ** ໃຫ້ຜົລອັນເປັນສຸຂຄວຣປັຕຖນາ

## ເຫຕຸໃຫ້ເກີດກຸສົລ

ເຫຕຸໃຫ້ກຸສົລຈິຕເກີດຂຶ້ນກໍໄດ້ແກ່ ໂຍນິໂສມນສິການ ຄື **ການພິຈາຣຕາໂດຍແຍບຄາຍ ພິຈາຣຕາໃຫ້ຊຶ້ງເຖິງສພາພແຫ່ງຄວາມເປັນຈິງໃນອາຣົມຕ໌ນັ້ນໆ** ໂຍນິໂສມນສິການນີ້ຍ່ອມເກີດໂດຍອາສັຍເຫຕຸ ໕ ປຣະການ ຄື

໑. **ປຸພ຺ເພ ຈ ກຕປຸຍ຺ຌຕາ** ເຄີຍທຳບຸຌໄວ້ແຕ່ປາງກ່ອນ

໒. **ປຕິຣູປເທສວາສ** ຢູ່ໃນປຣະເທສທີ່ສົມຄວຣ ຄືປຣະເທສທີ່ມີສັປບຸຣຸສ

໓. **ສປ຺ປຸຣິສູປນິສ຺ສຍ** ຄົບຫາສມາຄົມກັບສັປບຸຣຸສ

໔. **ສທ຺ຘມ຺ມສ຺ສວນ** ຟັງທັມມ໌ຂອງສັປບຸຣຸສ

໕. **ອຕ຺ຕາສມ຺ມາປຕິຘິ** ຕັ້ງຕົນໄວ້ຊອບ

ເຫຕຸໃຫ້ເກີດໂຍນິໂສມນສິການ ໕ ປຣະການນີ້ ປຣະການທີ່ ໑ ເປັນອດີຕກັມມ໌ ສ່ວນອີກ ໔ ປຣະການທີ່ເຫລືອເປັນປັຈຈຸບັນກັມມ໌

# ບຸນກິຣິຍາວັຕຖຸ ໑໐

ບຸນກິຣິຍາວັຕຖຸ ແປລວ່າ ຄວາມດີທີ່ຄວຣກຣະທຳ ເພາະເປັນເຫຕຸເປັນທີ່ຕັ້ງແຫ່ງຜົລດີໃຫ້ເກີດຂຶ້ນ ເປັນສິ່ງທີ່ໃຫ້ບຸນເປັນກຸສົລ ບຸນກິຣິຍາວັຕຖຸມີ ໑໐ ໄດ້ແກ່

໑. ທານມັຍ ບຸນສຳເຣັຈດ້ວຍການບໍຣິຈາຄທານ ຄືການໃຫ້ສິ່ງທີ່ເປັນປຣະໂຍຊນ໌ສຸຂແກ່ຜູ້ທີ່ໄດ້ຮັບ

໒. ສີລມັຍ ບຸນສຳເຣັຈດ້ວຍການຮັກສາສີລ ຄືຮັກສາກາຍວາຈາໃຈໃຫ້ເປັນປົກຕິ ບໍ່ເປັນການບຽດບຽນຜູ້ອື່ນ

໓. ພາວນາມັຍ ບຸນສຳເຣັຈດ້ວຍການຈເຣີນພາວນາ ຄືການອົບຮົມຈິຕໃຈໃຫ້ກຸສົລອັນປຣະເສີຖເກີດຂຶ້ນ ແລະໃຫ້ຈເຣີນຍິ່ງຂຶ້ນດ້ວຍ

໔. ອປຈາຍນມັຍ ບຸນສຳເຣັຈດ້ວຍປຣະພຣຶຕິອ່ອນນ້ອມຕໍ່ຜູ້ໃຫຍ່ ຄືການສແດງຄາຣວະ ແລະອ່ອນນ້ອມແກ່ຜູ້ທີ່ຈເຣີນດ້ວຍຊາຕິວຸฒິ ວັຍວຸฒິ ແລະຄຸຓວຸฒິ

໕. ເວຍຢາວັຈຈມັຍ ບຸນສຳເຣັຈດ້ວຍການຂວນຂວາຍໃນກິຈທີ່ດີຄືສົງເຄາະຫ໌ຊ່ວຍເຫລືອກິຈການທີ່ກ່ຽວແກ່ປຣິຍັຕິ ແລະປຕິບັຕິ

໖. ປັຕຕິທານມັຍ ບຸນສຳເຣັຈດ້ວຍການແບ່ງສ່ວນບຸນໃຫ້ແກ່ຜູ້ອື່ນ ຄື ອຸທິສສ່ວນກຸສົລໃຫ້ຜູ້ມີຄຸຕລອດຈົນສັພສັຕວ໌ທັ້ງຫລາຍ

໗. ປັຕຕານຸໂມທນາມັຍ ບຸນສຳເຣັຈດ້ວຍການອນຸໂມທນາສ່ວນບຸນຂອງຜູ້ອື່ນ ຄື ການເຫັນດີເຫັນຊອບ ແລະຄລ້ອຍຕາມດ້ວຍຄວາມອິ່ມໃຈໃນສ່ວນບຸນທີ່ມີຜູ້ອຸທິສໃຫ້ນັ້ນ

໘. ທັມມັສສວນມັຍ ບຸນສຳເຣັຈດ້ວຍການຟັງທັມມ໌ ຄື ຕັ້ງໃຈສດັບຮັບຟັງພຣະທັມມ໌ເທສນາ ແມ້ຟັງການສັ່ງສອນວິຊາທາງໂລກທີ່ບໍ່ມີໂທษ ກໍສົງເຄາະຫ໌ເຂົ້າຂໍ້ນີ້

໙. ທັມມເທສນາມັຍ ບຸນສຳເຣັຈດ້ວຍການສແດງທັມມ໌ໃຫ້ຜູ້ອື່ນຟັງ ຄື ການສແດງທັມມ໌ແກ່ຜູ້ທີ່ປຣະສົງຄ໌ຟັງທັມມ໌ ແມ້ການສັ່ງສອນວິຊາທາງໂລກທີ່ບໍ່ມີໂທษກໍສົງເຄາະຫ໌ເຂົ້າໃນຂໍ້ນີ້

໑໐. ທິຕຖຸຊຸກັມມ ການທຳຄວາມເຫັນໃຫ້ຖືກຕ້ອງຕຣົງຕາມຄວາມເປັນຈິງຢ່າງນ້ອຍກໍຕ້ອງເຖິງ ກັມມັສກຕາປັญญາ ຄືຮູ້ວ່າສັຕວ໌ມີກັມມ໌ເປັນຂອງຕົນ ທຳດີໄດ້ດີ ທຳຊົ່ວໄດ້ຊົ່ວ ເປັນຕົ້ນ

***ບຸນກິຣິຍາວັຕຖຸ ໑໐ ນີ້ ເມື່ອສົງເຄາະຫ໌ລົງໃນປຣະເພທ ທານ ສີລ ພາວນາແລ້ວ ກໍໄດ້ດັ່ງນີ້***

☞ ປັຕຕິທານມັຍ ກັບປັຕຕານຸໂມທນາມັຍ ສົງເຄາະຫ໌ລົງໃນ **ທານມັຍ**

☞ ອປຈາຍນມັຍ ກັບ ເວຍຢາວັຈຈມັຍ ສົງເຄາະຫ໌ລົງໃນ **ສີລມັຍ**

☞ ທັມມັສສວນມັຍ ທັມມເທສນາມັຍ ແລະ ທິຕຖຸຊຸກັມມ໌ ສົງເຄາະຫ໌ລົງໃນ **ພາວນາມັຍ**

ອີກນັຍນຶ່ງ ຕາມນັຍແຫ່ງພຸທສກາສິຕອັຖກຖາສແດງວ່າ **ທັມມັສສວນມັຍ** ກັບ **ທັມມເທສນາມັຍ** ສົງເຄາະຫ໌ລົງໃນທານກໍໄດ້ ດັ່ງທີ່ພຣະພຸທສອົງຄ໌ຊົງເທສນາວ່າ **ສພ຺ພທານ຺ ธม຺มทาน຺ ชินาติ** ການໃຫ້ທັມມ໌ຍ່ອມຊນະການໃຫ້ທັ້ງປວງ

ສ່ວນ **ທິຍຖຸຊຸກັມມ໌** ນັ້ນມີສແດງໄວ້ໃນ ສັງຄີຕິສູຕຣ໌ ແຫ່ງປາຝິກວັຄອັຖກຖາວ່າ **ທິຍຖຸຊຸກມມ຺ ສພ຺ເພສ໌ນິຍົມລກຂນ**໌ ທິຍຖຸຊຸກັມມ໌ນີ້ ເປັນເຄື່ອງຫມາຍແຫ່ງຄວາມສົມບູຣຕ໌ຂອງບຸຝກີຣິຍາວັຕຖຸທັ້ງປວງ ຫມາຍຄວາມວ່າສິ່ງເຄາະຫ໌ທິຍຖຸຊຸກັມມ໌ລົງໃນ **ທານມັຍ ສີລມັຍ** ແລະ **ກາວນາມັຍ** ໄດ້ທັ້ງຫມົດ ເພາະທິຍຖຸຊຸກັມມ໌ກໍຄືປັຝຍາທີ່ເຫັນຕຣົງຕາມຄວາມເປັນຈິງ ຖ້າການບໍຣິຈາຄທານການຮັກສາສີລການຈເຣີນກາວນາໂດຍບໍ່ມີທິຍຖຸຊຸກັມມ໌ປຣະກອບດ້ວຍແລ້ວ ການໃຫ້ຜົລຂອງ **ທານ ສີລ ກາວນາ** ເຫລົ່ານັ້ນກໍບໍ່ສົມບູຣຕ໌ ມີການຂາດຕົກບົກພ່ອງ ແມ້ຈະໃຫ້ຜົລໄປເກີດເປັນມນຸທຍ໌ ຫຼື ເທວດາກໍຈະເປັນມນຸທຍ໌ເປັນເທວດາຊັ້ນຕ່ຳ ມີອວັຍວະຂາດຕົກບົກພ່ອງຫຼືໂງ່ຈ້າເບົາປັຝຍາ ຊັພຍ໌ສົມບັຕິບໍ່ອຸດົມສົມບູຣຕ໌ ມີຄວາມເດືອດຮ້ອນ ບໍ່ຢາກມີຄວາມສຸຂຄວາມສບາຍ

## ເຫຕຸໃຫ້ເກີດໂສມນັສກຸສົລ ໖ ປຣະການ

໑. **ໂສມນສ຺ສປຝິສນ຺ລິກຕາ** ມີປຝິສົນລິຈິຕເປັນໂສມນັສ

໒. **ສທ຺ຣາພຫ຺ລຕາ** ມີສັທລາຫລາຍ

໓. **ວິສຸທ຺ຣທິຍ຺ກີຕາ** ມີຄວາມເຫັນຖືກຕ້ອງຫມົດມົລທິນ

໔. **ອານິສ໌ສທສ຺ສາວິຕາ** ເຫັນອານິສົງສ໌ແຫ່ງກຸສົລກັມມ໌ນັ້ນໆ

໕. **ອິຕ຺ຖາຕມ຺ມຕສມາໂຢໂຄ** ໄດ້ປຣະສົບກັບອິຝຖາຣົມຕ໌ ຄືໄດ້ໄທຍລັມມ໌ແລະປຝິຄາຫົກທີ່ພຶງພໍໃຈ

໖. **ກສ຺ສຈິປີສາກາໂວ** ບໍ່ມີອຸປສັຄຂັດຂ້ອງໃດໆ

## ເຫຕຸໃຫ້ເກີດອຸເບກຂາກຸສົລ ໖ ປຣະການ

໑. **ອຸເປກ຺ຂາປຝິສນ຺ລິກຕາ** ມີປຝິສົນລິຈິຕເປັນອຸເບກຂາ

໒. **ອປ຺ປສທ຺ຣຕາ** ມີສັທລານ້ອຍ

໓. **ອວິສຸທ຺ຣທິຍ຺ກີຕາ** ມີຄວາມເຫັນບໍ່ບໍຣິສຸທຣົນັກ ມີມົລທິນເຈືອບ້າງ

໔. **ອານິສ໌ສອທສ຺ສາວິຕາ** ບໍ່ເຫັນຫຼືບໍ່ເຂົ້າໃຈໃນອານິສົງສ໌ ແຫ່ງກຸສົລກັມມ໌ນັ້ນໆ

໕. **ມຊ຺ຊຕ຺ຕາຕມ຺ມຕາສມາໂຢໂຄ** ປຣະສົບກັບອາຣົມຕ໌ປານກາງ ຄື ໄດ້ໄທຍລັມມ໌ແລະປຝິຄາຫົກ ພໍປານກາງ

໖. **ກສ຺ສຈິປີຣິກຕາ** ມີອຸປສັຄຂັດຂ້ອງຢ່າງໃດຢ່າງນຶ່ງ

ມີຂໍ້ສັງເກຕໃນເຣື່ອງໂສມນັສອກຸສົລກັບໂສມນັສກຸສົລ ແລະອຸເບກຂາອກຸສົລກັບອຸເບກຂາກຸສົລ ດັ່ງຕໍ່ໄປນີ້

ໂສມນັສກຸສົລ ຊຶ່ງມີແຕ່ລະເພາະໂສມນັສໂລກມູລຈິຕເທົ່ານັ້ນ ເປັນການມີປີຕິຍິນດີໃນສິ່ງທີ່ຊົ່ວ ຍ່ອມຊົ່ວຫລາຍເປັນບາປຫລາຍ ໂສມນັສກຸສົລ ເປັນການປີຕິຍິນດີໃນສິ່ງທີ່ດີ ກໍຍ່ອມດີຫລາຍເປັນບຸຝຫລາຍ

ແຕ່ວ່າ ອຸເບກຂາອກຸສົລນັ້ນ ຄວາມເສີຍໃນໂລກມູລຈິຕ ຫມາຍວ່າຍິນດີເລັກນ້ອຍຈຶ່ງເສີຍໆ ບໍ່ເຖິງກັບປີຕິ ປລາບປລື້ມ ຄວາມເສີຍໃນໂມຫມູລຈິຕນັ້ນ ເສີຍໄປເພາະບໍ່ຮູ້ ສ່ວນອຸເບກຂາ ຄວາມເສີຍໃນກາມກຸສົລນີ້ ເສີຍເພາະສັທລານ້ອຍ ເສີຍເພາະປຣະສົບ

ກັບອາຣົມຕ໌ປານກາງ ເປັນຄວາມເສີຍເພາະຄວາມປິຕິຄວາມຍິນດີບໍ່ເກີດ ຂໍກ່າວລ່ວງໜ້າວ່າ ອຸເບກຂາໃນຊານນັ້ນ ເສີຍເພາະລະຄວາມຍິນດີປີຕິຍິນດີປລາບປລື້ມໃຈໄດ້ແລ້ວ ໂດຍເຫັນວ່າເປັນຂອງຫຍາບກວ່າອຸເບກຂາ

ດັ່ງນັ້ນ ອຸເບກຂາໃນອກຸສົລ ເສີຍຕໍ່ສິ່ງຊົ່ວ ຍ່ອມມີບາປນ້ອຍ ອຸເບກຂາໃນກາມກຸສົລ ເສີຍເພາະສັທธານີ້ນ້ອຍ ກໍ່ຍ່ອມໄດ້ບຸນນ້ອຍ ແຕ່ວ່າ ອຸເບກຂາໃນຊານກຸສົລ ອານິສົງສ໌ຫລາຍກວ່າ ໂສມນັສໃນຊານກຸສົລ ເພາະລະຄວາມໂສມນັສອັນເປັນສິ່ງທີ່ຫຍາບເສັຽໄດ້

## ຍາຕສັມປຍຸຕຕ

ຍາຕສມ຺ປຍຸຕ຺ຕໍ ແປລວ່າ ປຣະກອບດ້ວຍປັຍຍາ ຄື ມີຄວາມຮູ້ເຫັນຖືກຕ້ອງຕຣົງຄວາມເປັນຈິງ ໃນກາມກຸສົລນີ້ຫມາຍເຖີງພຽງວ່າມີກັມມສກຕາປັຍຍາ ແລະວິປັສສນາປັຍຍາ ກໍເປັນຍາຕສັມປຍຸຕຕແລ້ວ

ກັມມັສກຕາປັຍຍາ ປັຍຍາມີຮູ້ວ່າສັຕວ໌ມີກັມມ໌ເປັນສົມບັຕິຂອງຕົນ ທຳດີໄດ້ດີ ທຳຊົ່ວໄດ້ຊົ່ວ

ວິປັສສນາປັຍຍາ ປັຍຍາທີ່ຮູ້ຂັນธ໌ ໕ ຄື ຣູປນາມເປັນອນິຈຈັງ ທຸກຂັງ ອນັຕຕາ

ປັຍຍາທີ່ຮູ້ເຫັນວ່າສັຕວ໌ມີກັມມ໌ເປັນສົມບັຕິຂອງຕົນ ອັນເອີ້ນວ່າ ກັມມັສກຕາປັຍຍານີ້ ມີ ໑໐ ປຣະການ ຄື

| | |
|---|---|
| ໑. ອຕ຺ຖິທິນ຺ນໍ | ປັຍຍາຮູ້ເຫັນວ່າ ການໃຫ້ທານຍ່ອມມີຜົລ |
| ໒. ອຕ຺ຖິຢິຕ຺ຖໍ | ປັຍຍາຮູ້ເຫັນວ່າ ການບູຊາຍ່ອມມີຜົລ |
| ໓. ອຕ຺ຖິຫຸຕໍ | ປັຍຍາຮູ້ເຫັນວ່າ ການບວງສວງເທວດາຍ່ອມມີຜົລ |
| ໔. ອຕ຺ຖິກມ຺มานํ ຜລໍວິປາໂກ | ປັຍຍາຮູ້ເຫັນວ່າ ຜົລວິບາກກັມມ໌ດີກັມມ໌ແລະຊົ່ວມີຢູ່ (ທຳດີໄດ້ດີ ທຳຊົ່ວໄດ້ຊົ່ວ ທັ້ງທາງຕຣົງແລະທາງອ້ອມ) |
| ໕. ອຕ຺ຖິອຢໍໂລໂກ | ປັຍຍາຮູ້ເຫັນວ່າ ໂລກນີ້ມີຢູ່ (ຜູ້ຈະມາເກີດນັ້ນ ມີ) |
| ໖. ອຕ຺ຖິປໂຣໂລໂກ | ປັຍຍາຮູ້ເຫັນວ່າ ໂລກໜ້າມີຢູ່ (ຜູ້ຈະໄປເກີດນັ້ນ ມີ) |
| ໗. ອຕ຺ຖິມາຕາ | ປັຍຍາຮູ້ເຫັນວ່າ ມາຕດາມີຢູ່ (ການທຳດີ ທຳຊົ່ວຕໍ່ມາຕດາ ຍ່ອມຈະໄດ້ຮັບຜົລ) |
| ໘. ອຕ຺ຖິປິຕາ | ປັຍຍາຮູ້ເຫັນວ່າບິດາມີຢູ່ (ການທຳດີ ທຳຊົ່ວ ຕໍ່ບິດາຍ່ອມຈະໄດ້ຮັບຜົລ) |
| ໙. ອຕ຺ຖສຕ຺ຕໂອປປາຕິກາ | ປັຍຍາຮູ້ເຫັນວ່າ ໂອປປາຕິກສັຕວ໌ນັ້ນມີຢູ່ (ສັຕວ໌ນຣົກ ເປຕ ອສຸຣກາຍ ເທວດາ ພຣົຫ໌ມ ນັ້ນມີ) |
| ໑໐. ອຕ຺ຖິໂລເກສມຕພ຺ຣາຫ຺ມຕາ ສມ຺มาປฏิປນ຺ນາ | ປັຍຍາຮູ້ເຫັນວ່າ ສມຕພຕາຫ໌ມຕຊຜູ້ປຕິບັຕິດີປຕິບັຕິຊອບ ປຣະກອບດ້ວຍຄວາມຮູ້ຍິ່ງ ເຫັນຈິງປຣະຈັກຍ໌ແຈ້ງຊຶ່ງໂລກນີ້ ແລະໂລກໜ້າດ້ວຍຕົນເອງ ແລ້ວປຣະກາສໃຫ້ຜູ້ອື່ນຮູ້ໄດ້ນັ້ນມີຢູ່ໃນໂລກນີ້ |

## ເຫດໃຫ້ເກີດຍາຕສັມປຢຸຕຕທັມມ໌ ມີ ໔ ປຣະການ

| | |
|---|---|
| ໑. ປຍຸຍາສໍວຕຕນິກມຸມປນິສ຺ສຍຕາ | ປະຕິສົນທິມາໂດຍອາສັຍກຸສົລກັມມ໌ທີ່ປຣະກອບດ້ວຍປັນຍາ |
| ໒. ອພ຺ຍາປຊ຺ຊໂລກູປປຕ຺ຕິຢາ | ເກີດໃນຊາຕິທີ່ຫາມິດຄວາມກັງວົລຫ່ວງໃຍປຣາສຈາກຄວາມພຍາບາທ ມີໂອກາສໄດ້ເຂົ້າວັດຟັງທັມມ໌ |
| ໓. ກິເລສທູຣຕາ | ຫ່າງໄກລຈາກກິເລສ ບໍ່ສົນໃຈໃນການສແວງຫາກິເລສທັມມ໌ |
| ໔. ອິນ຺ທ຺ຣິຢປຣິປາກຕາ | ມີປັນຍິນທຣີຍ໌ແກ່ກລ້າ ຄື ມີອາຍຸຣະຫວ່າງ ໔໐ ເຖິງ ໕໐ ປີ ທີ່ເອີ້ນວ່າ "**ປັນຍາທສກະ**" ອັນເປັນວັຍທີ່ມີປັນຍາພິນິຈພິຈາຣຕາໂດຍຮອບຄອບເຖິງເຫດຜົລ |

## ເຫດໃຫ້ເກີດຍາຕສັມປຢຸຕຕທັມມ໌ ອີກນັຍນຶ່ງ ມີ ໗ ປຣະການ

| | |
|---|---|
| ໑. ປຣິປຸຈ຺ຉກຕາ | ມັກໄຕ່ຖາມປັນຫາທັມມ໌ຕ່າງ ໆ |
| ໒. ວຕ຺ຖຸວິສຸທ຺ທກິຣິຍາ | ມັກສະອາດທັ້ງກາຍໃຈ ຕລອດຈົນວັຕຖຸເຄື່ອງໃຊ້ສອຍ |
| ໓. ອິນ຺ທ຺ຣິຢສມຕ຺ຕປຕິປາທນາ | ມັກຮັກສາອິນທຣີຍ໌ ໕ ມີ ສັທທາ ເປັນຕົ້ນ ໃຫ້ຊົງໄວ້ໂດຍສມໍ່າສເມີກັນ |
| ໔. ທຸປ຺ປຍຸຍປຸຄ຺ຄປຣິວຊ຺ຊນາ | ມັກຫລີກລ້ຽງໃຫ້ພົ້ນຈາກບຸຄຄົລຜູ້ບໍ່ມີປັນຍາ |
| ໕. ປຍຸຍວນ຺ຕປຸຄ຺ຄລເສວນາ | ມັກຄົບຫາສມາຄົມກັບບຸຄຄົລຜູ້ເປັນບັຕຖິຕ |
| ໖. ຄມ຺ພີຣຍາຕຈຣິຢປຈ຺ຈເວກ຺ຂຕາ | ມັກພິຈາຣຕາທັມມ໌ທີ່ເລິກຊຶ້ງ |
| ໗. ຕທທິມຸຕ຺ຕຕາ | ມັກໃນການນ້ອມຈິຕສແວງຫາອະນິສົງແຫ່ງທັມມ໌ທີ່ຕ້ອງຕຣິກຕຣອງອັນທໍາໃຫ້ເກີດປັນຍາ |

## ເຫດໃຫ້ເກີດຍາຕວິປປຢຸຕຕທັມມ໌ ໔ ປຣະການ

໑. ປຍຸຍາອສໍວຕຕນິກມຸມປນິສ຺ສຍຕາ

໒. ສພ຺ຍາປຊ຺ຊໂລກູປປຕ຺ຕິຢາ

໓. ກິເລສາທູຣຕາ

໔. ອິນ຺ທ຺ຣິຢອປຣິປາກຕາ

ສ່ວນຄວາມຫມາຍທັ້ງ ໔ ຂໍ້ນີ້ ກໍມີນັຍຕຣົງກັນຂ້າມກັບເຫດໃຫ້ເກີດຍາຕສັມປຢຸຕຕທັມມ໌ ໔ ຂໍ້ຂ້າງເທິງນັ້ນ

## ເຫດໃຫ້ເກີດຍາຕວິປປຢຸຕຕທັມມ໌ ອີກນັຍນຶ່ງມີ ໗ ປຣະການ

໑. ອປຣິປຸຈ຺ຉກຕາ

໒. ວຕ຺ຖຸອວິສທຕາ

໓. ອິນ຺ທຣິຍອສມຕ຺ຕປຜິປາທນາ

໔. ທຸປ຺ປຍ຺ຍປຸຄ຺ຄລາເສວນາ

໕. ປຍ຺ຍາວນ຺ຕປຸຄ຺ຄລາປຣິວຊ຺ຊນາ

໖. ຄມ຺ພີຣຍາຕຈຣິຍອປຈ຺ຈເວກ຺ຂຕາ

໗. ອຕທທິມຸຕ຺ຕຕາ

ສ່ວນຄວາມໝາຍທັ້ງ ໗ ຂໍ້ນີ້ ກໍມີນັຍຕຣົງກັນຂ້າມກັບເຫຕຸໃຫ້ເກີດຍາຕ ສັມປຍຸຕຕທັມມ໌ ໗ ຂໍ້ທີ່ກ່າວມາແລ້ວນັ້ນ

ສ່ວນ ສັງຂາຣເພທໃນມຫາກຸສົລນີ້ ຊຶ່ງມີ ອສັງຂາຣິກ ໔ ດວງ ແລະ ສສັງຂາຣິກ ໔ ດວງນັ້ນ ມີຄວາມໝາຍວ່າ ຈິຕດວງນັ້ນເກີດຂຶ້ນໂດຍມີສິ່ງຊັກຈູງ ຫຼືເກີດຂຶ້ນໂດຍບໍ່ມີສິ່ງຊັກຈູງ ຕາມນັຍດັ່ງທີ່ໄດ້ກ່າວແລ້ວໃນໂລກມູລຈິຕທ່າອິດນັ້ນ

## ມຫາວິບາກຈິຕ

ມຫາວິບາກຈິຕ ເປັນຈິຕທີ່ເປັນຜົລຂອງມຫາກຸສົລ ທຳບຸຍທຳກຸສົລດ້ວຍມຫາກຸສົລຈິຕຢ່າງໃດ ກໍໄດ້ມຫາວິບາກຈິຕຢ່າງນັ້ນ ມຫາກຸສົລຈິຕເປັນເຫຕຸ ຍ່ອມໃຫ້ຜົລເປັນມຫາວິບາກຈິຕທີ່ຕຣົງກັນສເມີ ກ່າວຄື

| **ມຫາກຸສົລຈິຕເປັນ** | **ໂສມນັສ** | **ໃຫ້ຜົລເປັນມຫາວິບາກ** | **ໂສມນັສ** |
|---|---|---|---|
| " | ອຸເປກຂາ | " | ອຸເປກຂາ |
| " | ຍາຕສັມປຍຸຕຕ | " | ຍາຕສັມປຍຸຕຕ |
| " | ຍາຕວິປຍຸຕຕ | " | ຍາຕວິປຍຸຕຕ |
| " | ອສັງຂາຣິກ | " | ອສັງຂາຣິກ |
| " | ສສັງຂາຣິກ | " | ສສັງຂາຣິກ |

***ດັ່ງນັ້ນ ມຫາວິບາກຈິຕ ຈຶ່ງມີຈຳນວນເທົ່າກັນກັບມຫາກຸສົລຈິຕ ຄື ໘ ດວງ ໄດ້ແກ່***

ດວງທີ່ ໑ **ໂສມນສ຺ສສຫຄຕໍ ຍາຕສມ຺ປຍຸຕ຺ຕໍ ອສງ຺ຂາຣິກໍ** ມຫາວິບາກດວງທີ່ ໑ ເກີດພ້ອມດ້ວຍຄວາມຍິນດີ ປຣະກອບດ້ວຍປັຍຍາ ເປັນ ອສັງຂາຣິກ ຄືເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ດວງທີ່ ໒ **ໂສມນສ຺ສສຫຄຕໍ ຍາຕສມ຺ປຍຸຕ຺ຕໍ ສສງ຺ຂາຣິກໍ** ມຫາວິບາກດວງທີ່ ໒ ເກີດພ້ອມດ້ວຍຄວາມຍິນດີ ປຣະກອບດ້ວຍປັຍຍາ ເປັນ ສສັງຂາຣິກ ຄືເກີດຂຶ້ນໂດຍມີສິ່ງຊັກຈູງ

ດວງທີ່ ໓ **ໂສມນສ຺ສສຫຄຕໍ ຍາຕວິປ຺ປຍຸຕ຺ຕໍ ອສງ຺ຂາຣິກໍ** ມຫາວິບາກດວງທີ່ ໓ ເກີດພ້ອມດ້ວຍຄວາມຍິນດີ ບໍ່ປຣະກອບດ້ວຍປັຍຍາ ເປັນ ອສັງຂາຣິກ ຄືເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ດວງທີ່ ໔ **ໂສມນສ຺ສສຫຄຕໍ ຍາຕວິປ຺ປຍຸຕ຺ຕໍ ສສງ຺ຂາຣິກໍ** ມຫາວິບາກດວງທີ່ ໔ ເກີດພ້ອມດ້ວຍຄວາມຍິນດີ ບໍ່ປຣະກອບດ້ວຍປັຍຍາ ເປັນ ສສັງຂາຣິກ ຄືເກີດຂຶ້ນໂດຍມີສິ່ງຊັກຈູງ

ດວງທີ່ ໕ **ອຸເປກຂາສຫຄຕံ ຌາຕສມ຺ປຍຸຕ຺ຕံ ອສງ຺ຂາຣິກံ** ມະຫາວິບາກດວງທີ່ ໕ ເກີດພ້ອມດ້ວຍຄວາມເສີຍໆ ປະກອບດ້ວຍປັນຍາ ເປັນ ອະສັງຂາຣິກ ຄືເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ດວງທີ່ ໖ **ອຸເປກຂາສຫຄຕံ ຌາຕສມ຺ປຍຸຕ຺ຕံ ສສງ຺ຂາຣິກံ** ມະຫາວິບາກດວງທີ່ ໖ ເກີດພ້ອມດ້ວຍຄວາມເສີຍໆ ປະກອບດ້ວຍປັນຍາ ເປັນ ສະສັງຂາຣິກ ຄືເກີດຂຶ້ນໂດຍມີສິ່ງຊັກຈູງ

ດວງທີ່ ໗ **ອຸເປກຂາສຫຄຕံ ຌາຕວິປ຺ປຍຸຕ຺ຕံ ອສງ຺ຂາຣິກံ** ມະຫາວິບາກດວງທີ່ ໗ ເກີດພ້ອມດ້ວຍຄວາມເສີຍໆ ບໍ່ປະກອບດ້ວຍປັນຍາ ເປັນ ອະສັງຂາຣິກ ຄືເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ດວງທີ່ ໘ **ອຸເປກຂາສຫຄຕံ ຌາຕວິປ຺ປຍຸຕ຺ຕံ ສສງ຺ຂາຣິກံ** ມະຫາວິບາກດວງທີ່ ໘ ເກີດພ້ອມດ້ວຍຄວາມເສີຍໆ ບໍ່ປະກອບດ້ວຍປັນຍາ ເປັນ ສະສັງຂາຣິກ ຄືເກີດຂຶ້ນໂດຍມີສິ່ງຊັກຈູງ

## ສມັງຄີຕາ ໕

ການບໍາເພັນກຸສົລກໍດີ ການກະທໍາອກຸສົລກໍດີ ຍ່ອມມີສມັງຄີຕາ (ຍ່ອມຕ້ອງປະກອບພ້ອມ ຫຼື ພ້ອມມູລດ້ວຍລັມມ໌) ໕ ປະການ ຄື

໑. **ອາຍຸຫນສມງຄີຕາ** ໄດ້ແກ່ຄວາມພຽຣໃນການກະທໍາກຸສົລຫຼືອກຸສົລນັ້ນ

໒. **ເຈຕນາສມງຄີຕາ** ໄດ້ແກ່ເຈຕນາ ໓ ປະກາໃນການທໍາກຸສົລຫຼືອກຸສົລ ຄື ເຈຕນາກ່ອນທໍາ ເຈຕນາຂະນະທີ່ກໍາລັງທໍາ ແລະເຈຕນາເມື່ອທໍາເສັຈແລ້ວ

໓. **ກມ຺ມສມງຄີຕາ** ໄດ້ແກ່ກຸສົລກັມມ໌ ຫຼືອກຸສົລກັມມ໌ ຫມາຍວ່າ ສິ່ງທີ່ທໍານັ້ນເປັນກຸສົລ ຫຼືອກຸສົລທີ່ສໍາເຣັຈມາຈາກຄວາມພຽຣ

໔. **ອຸປຕຸການສມງຄີຕາ** ໄດ້ແກ່ກັມມ໌ອາຣົມຕ໌ກັມມ໌ນິມິຕອາຣົມຕ໌ ຫຼືຄຕິນິມິຕອາຣົມຕ໌ ຊຶ່ງຈະປາກົຜຂຶ້ນເວລາໃກ້ຈະຕາຍ

໕. **ວິປາກສມງຄີຕາ** ໄດ້ແກ່ຜົລທີ່ຕ້ອງໄດ້ຮັບຈາກການກະທໍາກຸສົລຫຼືອກຸສົລນັ້ນໆ ແລ້ວຄື ຜົລຂອງສມັງຄີຕາທັ້ງ ໔ ທໍາອິດນັ້ນ

## ມຫາກິຣິຍາຈິຕ

ມຫາກິຣິຍາຈິຕ ເປັນຈິຕທີ່ໃຫ້ສໍາເຣັຈໃນການຄິດ ການທໍາ ການເວົ້າຂອງພຣະອຣຫັນຕ໌ທັ້ງຫລາຍຜູ້ຫມົດກິເລສທັ້ງປວງໂດຍສິ້ນເຊີງແລ້ວ ການຄິດ ການທໍາ ການເວົ້າ ເຫລົ່ານັ້ນຈຶ່ງບໍ່ເຫຕຸໃຫ້ເກີດຜົລໃນອນາຄົຕອີກເລີຍ!

ມີຄວາມຫມາຍວ່າ ມຫາກຸສົລນັ້ນ ຖ້າເກີດແກ່ບຸຄຄົລອື່ນທີ່ບໍ່ແມ່ນພຣະອຣຫັນຕ໌ ກໍຄົງເອີ້ນວ່າ ມຫາກຸສົລຈິຕ ແຕ່ຖ້າເກີດແກ່ພຣະອຣຫັນຕ໌ໂດຍຈະເພາະແລ້ວ ເອີ້ນວ່າ ມຫາກິຣິຍາຈິຕ

ທີ່ເອີ້ນວ່າ ມຫາກຸສົລຈິຕ ເພາະຈະຕ້ອງໃຫ້ຜົລໃນການຫນ້າ ແຕ່ເອີ້ນວ່າມຫາກິຣິຍາຈິຕ ເພາະຈິຕທີ່ປຣາສຈາກຜົລໃນອນາຄົຕ

***ມຫາກິຣິຍາຈິຕກໍມີຈໍານວນເທົ່າກັນກັບມຫາກຸສົລຈິຕ ຄື ໘ ດວງ ໄດ້ແກ່***

ດວງທີ່ ໑ **ໂສມນສ຺ສສຫຄຕ໌ ຌາຕສມ຺ປຍຸຕ຺ຕ໌ ອສງ຺ຂາຣິກໍ** ມຫາກິຣິຍາຈິຕດວງທີ່ ໑ ເກີດພ້ອມດ້ວຍຄວາມຍິນດີ ປະກອບດ້ວຍປັນຍາ ເປັນ ອສັງຂາຣິກ ຄືເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ດວງທີ່ ໒ **ໂສມນສ຺ສສຫຄຕ໌ ຌາຕສມ຺ປຍຸຕ຺ຕ໌ ສສງ຺ຂາຣິກໍ** ມຫາກິຣິຍາດວງທີ່ ໒ ເກີດພ້ອມດ້ວຍຄວາມຍິນດີ ປະກອບດ້ວຍປັນຍາ ເປັນ ສສັງຂາຣິກ ຄືເກີດຂຶ້ນໂດຍມີສິ່ງຊັກຈູງ

ດວງທີ່ ໓ **ໂສມນສ຺ສສຫຄຕ໌ ຌາຕວິປ຺ປຍຸຕ຺ຕ໌ ອສງ຺ຂາຣິກໍ** ມຫາກິຣິຍາດວງທີ່ ໓ ເກີດພ້ອມດ້ວຍຄວາມຍິນດີ ບໍ່ປະກອບດ້ວຍປັນຍາ ເປັນ ອສັງຂາຣິກ ຄືເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ດວງທີ່ ໔ **ໂສມນສ຺ສສຫຄຕ໌ ຌາຕວິປ຺ປຍຸຕ຺ຕ໌ ສສງ຺ຂາຣິກໍ** ມຫາກິຣິຍາດວງທີ່ ໔ ເກີດພ້ອມດ້ວຍຄວາມຍິນດີ ບໍ່ປະກອບດ້ວຍປັນຍາ ເປັນ ສສັງຂາຣິກ ຄືເກີດຂຶ້ນໂດຍມີສິ່ງຊັກຈູງ

ດວງທີ່ ໕ **ອຸເປກ຺ຂາສຫຄຕ໌ ຌາຕສມ຺ປຍຸຕ຺ຕ໌ ອສງ຺ຂາຣິກໍ** ມຫາກິຣິຍາດວງທີ່ ໕ ເກີດພ້ອມດ້ວຍຄວາມເສີຍໆ ປະກອບດ້ວຍປັນຍາ ເປັນ ອສັງຂາຣິກ ຄືເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ດວງທີ່ ໖ **ອຸເປກ຺ຂາສຫຄຕ໌ ຌາຕສມ຺ປຍຸຕ຺ຕ໌ ສສງ຺ຂາຣິກໍ** ມຫາກິຣິຍາດວງທີ່ ໖ ເກີດພ້ອມດ້ວຍຄວາມເສີຍໆ ປະກອບດ້ວຍປັນຍາ ເປັນ ສສັງຂາຣິກ ຄືເກີດຂຶ້ນໂດຍມີສິ່ງຊັກຈູງ

ດວງທີ່ ໗ **ອຸເປກ຺ຂາສຫຄຕ໌ ຌາຕວິປ຺ປຍຸຕ຺ຕ໌ ອສງ຺ຂາຣິກໍ** ມຫາກິຣິຍາດວງທີ່ ໗ ເກີດພ້ອມດ້ວຍຄວາມເສີຍໆ ບໍ່ປະກອບດ້ວຍປັນຍາ ເປັນ ອສັງຂາຣິກ ຄືເກີດຂຶ້ນເອງໂດຍບໍ່ມີສິ່ງຊັກຈູງ

ດວງທີ່ ໘ **ອຸເປກ຺ຂາສຫຄຕ໌ ຌາຕວິປ຺ປຍຸຕ຺ຕ໌ ສສງ຺ຂາຣິກໍ** ມຫາກິຣິຍາດວງທີ່ ໘ ເກີດພ້ອມດ້ວຍຄວາມເສີຍໆ ບໍ່ປະກອບດ້ວຍປັນຍາ ເປັນ ສສັງຂາຣິກ ຄືເກີດຂຶ້ນໂດຍມີສິ່ງຊັກຈູງ

## ຈໍາແນກກາມາວຈໂສກຕຈິຕໂດຍຊາຕິເພທເປັນຕົ້ນ

໑. **ຊາຕິເພທ** ໂດຍປະເພທແຫ່ງຊາຕິກາມາວຈຣກຸສົລໂສກຕຈິຕ ຫຼືກາມໂສກຕຈິຕ ໒໔ ດວງນີ້ ມີ ໓ ຊາຕິ ຄື

☞ ມຫາກຸສົລຈິຕ ໘ ດວງ ເປັນຊາຕິກຸສົລ

☞ ມຫາວິບາກຈິຕ ໘ ດວງ ເປັນຊາຕິວິບາກ

☞ ມຫາກິຣິຍາຈິຕ ໘ ດວງ ເປັນຊາຕິກິຣິຍາ

໒. **ພູມິເພທ** ໂດຍປະເພທແຫ່ງພູມິ ກາມໂສກຕຈິຕທັ້ງ ໒໔ ດວງ ເປັນກາມາວຈຣພູມິ ຄື ເປັນຈິຕຊັ້ນກາມາວຈຢ່າງດຽວ

໓. **ເວທນາເພທ** ໂດຍປະເພທແຫ່ງເວທນາ ກາມໂສກຕຈິຕ ໒໔ ດວງ ມີເວທນາ ໒ ຢ່າງຄື

☞ ໂສມນັສເວທນາ ໑໒ ດວງ

☞ ອຸເບກຂາເວທນາ ໑໒ ດວງ ຊຶ່ງຕາມຣາຍຊື່ຂອງຈິຕກໍໄດ້ຣະບຸບອກໄວ້ແລ້ວວ່າດວງເປັນເປັນເວທນາໃດ ຈຶ່ງບໍ່ຕ້ອງກ່າວຊ້ໍາໃນທີ່ນີ້ອີກ

໔. **ເຫຕຸເພທ** ໂດຍປຣະເພທແຫ່ງເຫຕຸ ການໂສກຕຈິຕທັ້ງ ໘໔ ດວງ ເປັນ ສເຫຕຸກຈິຕທັ້ງນັ້ນ

☞ ທີ່ເປັນ***ຍາຕສັມປຢຸຕຕ ໑໔ ດວງ*** ນັ້ນ ເປັນສເຫຕຸກຈິຕທີ່ມີ ໓ ເຫຕຸ ຄື ມີ ອໂລກເຫຕຸ ອໂທສເຫຕຸ ແລະ ອໂມຫະເຫຕຸ ປຣະກອບ

☞ ທີ່ເປັນ***ຍາຕວິປຢຸຕຕ ໑໔ ດວງ*** ນັ້ນ ເປັນສເຫຕຸກຈິຕທີ່ມີສັມປຢຸຕຕເຫຕຸພຽງ ໒ ຄື ມີ ອໂລກເຫຕຸ ອໂທສເຫຕຸ ປຣະກອບເທົ່ານັ້ນ

໕. **ສັງຂາຣເພທ** ໂດຍປຣະເພທແຫ່ງສັງຂາຣ ການໂສກຕຈິຕ ເປັນອສັງຂາຣິກ ໑໔ ດວງ ເປັນສສັງຂາຣິກ ໑໔ ດວງ ຊຶ່ງຕາມຣາຍຊື່ກໍບອກໄວ້ແລ້ວວ່າດວງໃດເປັນອສັງຂາຣິກ ຫຼືສສັງຂາຣິກ

໖. **ສັມປຢຸຕຕເພທ** ໂດຍປຣະເພທແຫ່ງສັມປຢຸຕຕ ການໂສກຕຈິຕເປັນຍາຕສັມປຢຸຕຕ ໑໔ ດວງ ເປັນຍາຕວິປຢຸຕຕ ໑໔ ດວງ ຕາມຣາຍຊື່ກໍບອກໄວ້ແລ້ວເຫມືອນກັນ

໗. **ໂສກຕເພທ** ໂດຍປຣະເພທແຫ່ງໂສກຕະ ການໂສກຕຈິຕທັ້ງ ໘໔ ດວງ ຊື່ກໍບອກຢູ່ແລ້ວວ່າເປັນໂສກຕຈິຕ ເປັນຈິຕທີ່ດີງາມທັ້ງນັ້ນແລະເປັນຈິຕທີ່ມີໂສກຕເຈຕສິກປຣະກອບດ້ວຍ

໘. **ໂລກເພທ** ໂດຍປຣະເພທແຫ່ງໂລກ ການໂສກຕຈິຕ ໘໔ ດວງ ເປັນໂລກິຍຈິຕ ບໍ່ແມ່ນໂລກຸຕຕຈິຕ

໙. **ຊາຕເພທ** ໂດຍປຣະເພທແຫ່ງຊານ ການໂສກຕຈິຕເປັນ ອຊານທັ້ງ ໘໔ ດວງ

# ການຍິ້ມແລະຫົວລົ້

ການຍິ້ມແຍ້ມແລະການຫົວລົ້ນັ້ນ ໃນຄັມກີຣ໌ອລັງການ ໄດ້ຈຳແນກໄວ້ເປັນ ໖ ຢ່າງ ຄື

໑. **ສິຕະ** ຍິ້ມຢູ່ໃນຫນ້າ ບໍ່ເຫັນໄຮຟັນ
໒. **ຫສິຕະ** ຍິ້ມແຍ້ມພໍເຫັນໄຮຟັນ
໓. **ວິຫສິຕະ** ຫົວລົ້ເບົາໆ
໔. **ອຸປຫສິຕະ** ຫົວລົ້ຈົນກາຍໄຫວ
໕. **ອປຫສິຕະ** ຫົວລົ້ຈົນນ້ຳຕາໄຫລ
໖. **ອຕິຫສິຕະ** ຫົວລົ້ຈົນສັ່ນແງ້ກໆແລະໂຍກເຍກໄປທັ້ງຕົວ

**ສິຕະ** ແລະ **ຫສິຕະ** ເປັນການຍິ້ມແຍ້ມຂອງສົມເດັຈພຣະສັມມາສັມພຸທສເຈົ້າ ພຣະປັຈເຈກພຸທສເຈົ້າແລະພຣະອຣຫັນຕ໌ທັ້ງຫລາຍ ທີ່ເອີ້ນວ່າ ***"ຫສິຕຸປປາທຈິຕ"*** ແມ້ຈະໂສມນັສດ້ວຍມຫາກິຣິຍາກໍພຽງແຕ່ຍິ້ມຫຼືແຍ້ມເທົ່ານັ້ນ ບໍ່ເຖິງກັບຫົວລົ້ຈົນມີສຽງ ສ່ວນພຣະອນາຄາມີ ພຣະສກທາຄາມີ ພຣະໂສດາບັນ

*ຕລອດຈົນປຸຖຸຊົນທົ່ວໆ ໄປ ພຽງແຕ່ຍິ້ມແຍ້ມ ບໍ່ເຖິງກັບຫົວລົ້ກໍມີໄດ້ ແຕ່ບໍ່ເອີ້ນວ່າຍິ້ມແຍ້ມດ້ວຍຫສິຕຸປປາທຈິຕ*

**ວິຫສິຕະ** ແລະ **ອຸປຫສິຕະ** ເປັນການຫົວລົ້ຂອງພຣະອນາຄາມີ ພຣະສກທາຄາມີ ພຣະໂສດາບັນ ກັລຍາຊົນ ຕລອດຈົນປຸຖຸຊົນທົ່ວໆ ໄປ

**ອປຫສິຕະ** ແລະ **ອຕິຫສິຕະ** ເປັນການຫົວລົ້ຂອງບຸຄຄົລຊັ້ນຕ່ຳ ພາລບຸຄຄົລ

***ໃນປຣມັຕທິປນີຄີກາ ສແດງຈິຕທີ່ທຳໃຫ້ການຍິ້ມແຍ້ມແລະການຫົວລົ້ເກີດຂຶ້ນນັ້ນ ໄດ້ແກ່ຈິຕ ໑໓ ດວງ ຄື***

☞ ໂສມນັສ ໂລກມູລຈິຕ ໔

☞ ໂສມນັສ ຫສິຕຸປປາທະ ໑

☞ ໂສມນັສ ມຫາກຸສົລ ໔

☞ ໂສມນັສ ມຫາກິຣິຍາ ໔

***ປຸຖຸຊົນຍິ້ມແລະຫົວລົ້ດ້ວຍຈິຕ ໘ ດວງ ຄື***

☞ ໂສມນັສ ໂລກມູລົຈຕ ໔

☞ ໂສມນັສ ມຫາກຸສົລ ໔

***ພຣະເສກຂບຸຄຄົລ ໓ ຍິ້ມແລະຫົວລົ້ດ້ວຍຈິຕ ໖ ດວງ ຄື***

☞ ໂສມນັສ ໂລກມູລທິຜຖິຄຕວິປຍຸຕຕຈິຕ ໒

☞ ໂສມນັສ ມຫາກຸສົລ ໔

***ພຣະອເສກຂບຸຄຄົລ ຍິ້ມແຍ້ມດ້ວຍຈິຕ ໕ ດວງ ຄື***

☞ ໂສມນັສ ຫສິຕຸປາທະ ໑

☞ ໂສມນັສ ມຫາກິຣິຍາ ໔

ການຍິ້ມແຍ້ມຂອງພຣະອຣຫັນຕ໌ນັ້ນ ຖ້າອາຣົມຕ໌ເປັນ **ອໂນຣາຣິກະ** ຄືເປັນອາຣົມຕ໌ລະອຽດອັນບຸຄຄົລສັມມດາບໍ່ສາມາຖຮູ້ຂຕະນັ້ນຍິ້ມແຍ້ມດ້ວຍ ຫສິຕຸປປາທຈິຕ (ຫສິຕຸປປາທຈິຕນີ້ ເອີ້ນວ່າ ຫສນຈິຕກໍໄດ້)

ຖ້າອາຣົມຕ໌ເປັນ **ໂອຣາຣິກະ** ຄືເປັນອາຣົມຕ໌ທີ່ຫຍາບ ຫມາຍຄວາມວ່າເປັນອາຣົມຕ໌ສັມມດາທີ່ບຸຄຄົລທົ່ວໆ ໄປສາມາຖຮູ້ໄດ້ນັ້ນ ຂຕະນັ້ນຍິ້ມແຍ້ມດ້ວຍ ໂສມນັສມຫາກິຣິຍາ

## ສແດງຊາຕິແຫ່ງກາມາວຈຣຈິຕ

ມີຄາຖາສັງຄຫະ ສແດງຊາຕິແຫ່ງກາມາວຈຣຈິຕ ຄື ກາມຈິຕ ເປັນຄາຖາທີ່ ໗ ວ່າ

໗. ກາເມ ເຕວີສ ປາການີ ປຸຍ຺ຍາປຸຍ຺ຍານີ ວີສຕິ

ເອກາທສ ກຸຣິຢາ ເຈຕິ ຈຕຸປຍ຺ຍາສ ສພ຺ພຖາ ໆ

ແປລຄວາມວ່າ ວິບາກຈິຕ ໒໓ ກຸສົລຈິຕອກຸສົລຈິຕ ໑໐ ກິຣິຍາຈິຕ ໑໑ ຣວມເປັນກາມຈິຕ ໕໔ ເທົ່ານີ້ເອງ

ຂຍາຍຄວາມວ່າ ຈິຕທັ້ງຫມົດຊຶ່ງມີຈຳນວນ ນັຍໂດຍຫຍໍ້ ໘໙ ດວງ ຫຼືນັບຢ່າງພິສດາຣ ໑໒໑ ດວງນັ້ນ ກ່າວໂດຍຊາຕິກໍມີ ໔ ຊາຕິເທົ່ານັ້ນ ຄື ຊາຕິອກຸສົລ ຊາຕິກຸສົລ ຊາຕິວິບາກ ແລະຊາຕິກິຣິຍາ

ຈະເພາະໃນ ກາມຈິຕ ຄື ກາມາວຈຣຈິຕ ຊຶ່ງເປັນຈິຕທີ່ສ່ວນຫລາຍທ່ອງທ່ຽວຢູ່ໃນກາມພູມິນັ້ນ ມີຄົບທັ້ງ ໔ ຊາຕິ ໄດ້ແກ່ ອກຸສົລ ໑໒ ກາມກຸສົລ ໘ ຣວມ ໑໐ ກາມວິບາກ ໒໓ ແລະ ກາມກິຣິຍາ ໑໑

ທີ່ຕ້ອງເອີ້ນວ່າ ກາມກຸສົລ ກາມວິບາກ ກາມກິຣິຍາ ເພາະວ່າ

- ☞ ຈິຕທີ່ເປັນຊາຕິກຸສົລນັ້ນ ມີທັ້ງ ກາມກຸສົລ ຊຶ່ງກ່າວເຖິງຢູ່ບັດນີ້ ແລະ ມຫັຄຄຕກຸສົລ ໂລກຸຕຕຣກຸສົລ ຊຶ່ງຈະກ່າວຕໍ່ໄປຂ້າງຫນ້າ
- ☞ ຈິຕທີ່ເປັນຊາຕິວິບາກ ກໍມີທັ້ງ ກາມວິບາກ ຊຶ່ງກ່າວເຖິງຢູ່ບັດນີ້ ແລະມຫັຄຄຕວິບາກ ໂລກຸຕຕຣວິບາກ ຊຶ່ງຈະກ່າວຕໍ່ໄປຂ້າງຫນ້າ
- ☞ ຈິຕທີ່ເປັນຊາຕິກິຣິຍາ ກໍມີທັ້ງ ກາມກິຣິຍາ ຊຶ່ງກ່າວເຖິງຢູ່ບັດນີ້ ແລະ ມຫັຄຄຕກິຣິຍາ ຊຶ່ງຈະກ່າວຕໍ່ໄປຂ້າງຫນ້າ

ສ່ວນຈິຕທີ່ເປັນຊາຕິອກຸສົລນັ້ນ ມີກາມຈິຕແຕ່ແຫ່ງດຽວ ຈິຕທີ່ເປັນຊາຕິອກຸສົລບໍ່ມີໃນມຫັຄຄຕຈິຕແລະໂລກຸຕຕຈິຕເລີຍ ຈຶ່ງບໍ່ຕ້ອງໃຊ້ວ່າ ກາມອກຸສົລ

ອກຸສົລຈິຕ ໑໒ ດວງ ເປັນຊາຕິອກຸສົລ

ມຫາກຸສົລຈິຕ ໘ ດວງ ເປັນຊາຕິກຸສົລ ເພື່ອໃຫ້ຊັດແຈ້ງ ຈຶ່ງເອີ້ນວ່າ ກາມກຸສົລ

ອກຸສົລວິບາກຈິຕ ៧ ດວງ ອເຫຕຸກກຸສົລວິບາກ ๘ ດວງ ແລະ ມຫາວິບາກຈິຕ ๘ ດວງ ຣວມຈິຕ ໒໓ ດວງນີ້ ເປັນຊາຕິວິບາກ ເພື່ອໃຫ້ຊັດແຈ້ງຈຶ່ງເອີ້ນວ່າ ກາມວິບາກ

ອເຫຕຸກກິຣິຍາຈິຕ ໓ ດວງ ແລະມຫາກິຣິຍາຈິຕ ໘ ດວງ ຣວມຈິຕ ໑໑ ດວງນີ້ເປັນຊາຕິກິຣິຍາ ເພື່ອໃຫ້ຊັດແຈ້ງຈຶ່ງເອີ້ນວ່າ ກາມກິຣິຍາ

## ສແດງຢ່າງແບບບັນຊີຕໍ່ໄປນີ້ ບາງເທື່ອຈະເຮັດໃຫ້ເຫັນຄັກແນ່ຂຶ້ນ

| ຈິຕ | ຊາຕິອກຸສົລ | ຊາຕິກຸສົລ | ຊາຕິວິບາກ | ຊາຕິກິຣິຍາ |
|---|---|---|---|---|
| **ອກຸສົລຈິຕ ໑໒** | | | | |
| ☞ ໂລກມູລຈິຕ ໘ | ໘ | | | |
| ☞ ໂທສມູລຈິຕ ໒ | ໒ | | | |
| ☞ ໂມຫມູລຈິຕ ໒ | ໒ | | | |
| **ອເຫຕຸກຈິຕ ໑໘** | | | | |
| ☞ ອກຸສົລວິບາກຈິຕ ໗ | | | ໗ | |
| ☞ ອເຫຕຸກກຸສົລວິບາກຈິຕ ໘ | | | ໘ | |
| ☞ ອເຫຕຸກກິຣິຍາຈິຕ ໓ | | | | ໓ |
| **ກາມາວຈໂສກຓຈິຕ ໒໔** | | | | |
| ☞ ມຫາກຸສົລຈິຕ ໘ | | ໘ | | |
| ☞ ມຫາວິບາກຈິຕ ໘ | | | ໘ | |
| ☞ ມຫາກິຣິຍາຈິຕ ໘ | | | | ໘ |
| **ຣວມກາມຈິຕ ໕໔** | ໑໒ | ໘ | ໒໓ | ໑໑ |

## ຣູປາວຈຣຈິຕ

**ຣູປາວຈຣຈິຕ** ເປັນຈິຕທີ່ເຖິງຊຶ່ງຣູປຊານ ຫຼື ເປັນຈິຕທີ່ສ່ວນຫລາຍທ່ອງທ່ຽວຢູ່ໃນຣູປກູມີ ມີຄາຖາສັງຄຫະເປັນຄາຖາທີ່ ໘ ສແດງວ່າ

໘. ປຄ຺ຈລາ ຊານເພເທນ ຣູປາວຈຣມານສໍ
ປຸຍ຺ຍປາກກຣິຍາເພທາ ຕໍ ປຄ຺ຈທສລາ ກເວ ໆ

ແປລຄວາມວ່າ ຣູປາວຈຣຈິຕ ກ່າວໂດຍປຣະເພທແຫ່ງຊານມີ ໕ ແລ້ວ ຈຳແນກຕາມປຣະເພທ **ກຸສົລ ວິບາກ ກິຣິຍາ** ອີກ ຈຶ່ງເປັນ ໑໕ ດວງ

ອຣິບາຍວ່າ ຣູປາວຈຣຈິຕນັ້ນ ກ່າວໂດຍຊານເພທ ຄື ໂດຍປຣະເພທແຫ່ງຊານແລ້ວ ກໍມີ ໕ ໄດ້ແກ່ ຣູປາວຈຣປຖົມຊານຈິຕ ຣູປາວຈຣທຸຕິຍຊານຈິຕ ຣູປາວຈຣຕຕິຍຊານຈິຕ ຣູປາວຈຣຈຕຸຕຖຊານຈິຕ ແລະຣູປາວຈຣປັຄຈມຊານຈິຕ ຊຶ່ງມັກເອີ້ນກັນສັ້ນໆ ແຕ່ພຽງວ່າ **ປຖົມຊານ ທຸຕິຍຊານ ຕຕິຍຊານ ຈຕຸຕຖຊານ ປັຄຈມຊານ**

ຊານທັ້ງ ໕ ນີ້ ເມື່ອກ່າວໂດຍຊາຕິເພທ ຄືໂດຍປຣະເພທແຫ່ງຊາຕິ (ປຣະເພທຂອງຈິຕນັ້ນເອງ) ອີກ ໓ ໄດ້ແກ່ **ກຸສົລ ວິບາກ ກີຣິຍາ** ແລ້ວ ກໍເປັນຣູປາວຈຣກຸສົລຈິຕ ໕ ຣູປາວຈຣວິບາກຈິຕ ໕ ແລະຣູປາວຈຣກິຣິຍາຈິຕ ໕ ຈຶ່ງຣວມເປັນ ໑໕ ດວງ

ຣູປາວຈຣກຸສົລຈິຕ ໕ ນັ້ນໄດ້ແກ່ ຣູປາວຈຣປຖົມຊານກຸສົລຈິຕ ຣູປາວຈຣທຸຕິຍຊານກຸສົລຈິຕ ຣູປາວຈຣຕຕິຍຊານກຸສົລຈິຕ ຣູປາວຈຣຈຕຸຕຖຊານກຸສົລຈິຕ ແລະ ຣູປາວຈຣປັນຈມຊານກຸສົລຈິຕ

ຣູປາວຈຣວິບາກຈິຕ ໕ ແລະ ຣູປາວຈຣກິຣິຍາຈິຕ ໕ ກໍແຈກທຳນອງດຽວກັນນີ້

## ຊານຄືຫຍັງ

ຄຳວ່າ **ຊານ** ນີ້ ອັຜຖສາລິນີອັຖກຖາ ສແດງວ່າ **ອາຕມ຺မຸນုປနິຊ຺ဈານໂຕ ປຈ຺ຈນີກဈາປနໂຕ ວາ ဈານံ** ແປລຄວາມວ່າ ທັມມຊາຕິທີ່ເພັ່ງອາຣົມຕ໌ (ອັນມີກສິຓ ເປັນຕົ້ນ) ກໍດີ ຫຼື ທັມມຊາຕິທີ່ເຜົາທັມມ໌ອັນເປັນປຕິປັກຜ໌ (ມີນິວຣຕ໌ເປັນຕົ້ນ) ກໍດີ ທັມມຊາຕິນັ້ນເອີ້ນວ່າ **ຊານ**

ໃນປຣມັຕຖທີປນີຝີກາສແດງວ່າ **ဈາເນນ ສမ຺ປယုတ຺တံ ຈິຕ຺ຕမ຺ပိ ဈານຈິຕ຺ຕံ** ແປລຄວາມວ່າ ຈິຕໃດທີ່ປຣະກອບດ້ວຍຊານ ຈິຕນັ້ນເອີ້ນວ່າ **ຊານຈິຕ**

ຊານຈິຕນີ້ທັ້ງເພັ່ງອາຣົມຕ໌ແລະເຜົາປຕິປັກຜ໌ທັມມ໌ໄປພ້ອມກັນໃນຂຕະດຽວກັນດ້ວຍ ປຕິປັກຜ໌ທັມມ໌ທີ່ທຳລາຍການເພັ່ງອາຣົມຕ໌ ຈົນບໍ່ສາມາຖທີ່ຈະໃຫ້ເກີດຊານຈິຕໄດ້ນັ້ນ ເອີ້ນວ່າ ນິວຣຕ໌ ອັນມີຄວາມຫມາຍວ່າເປັນ ເຄື່ອງກັ້ນ ເຄື່ອງກີດກັນ ເຄື່ອງກີດຂວາງການກະທຳຄວາມດີ ໃນທີ່ນີ້ກໍຫມາຍຄວາມວ່າ ຂັດຂວາງບໍ່ໃຫ້ເຮັດຈົນເຖິງຊານໄດ້

## ນິວຣຕ໌ຂອງຊານ

ນິວຣຕ໌ອັນເປັນເຄື່ອງກີດຂວາງບໍ່ໃຫ້ເກີດຊານໄດ້ນັ້ນ ມີ ໕ ປຣະການ ຄື **ກາມັຈັນທນິວຣຕ໌ ພຍາປາທນິວຣຕ໌ ຖີນມິທສນິວຣຕ໌ ອຸທັຈຈກຸກກຸຈຈນິວຣຕ໌** ແລະ **ວິຈິກິຈຈານິວຣຕ໌**

໑. ກາມັຈັນທນິວຣຕ໌ ຄືຄວາມຕິດໃຈໃນການຄຸຕອາຣົມຕ໌ ອັນມີ **ຣູປ ສຽງ ກິ່ນ ຣົສ** ແລະ**ການສັມຜັສຖືກຕ້ອງ** ຊຶ່ງປຽບໄວ້ວ່າເຫມືອນນ້ຳທີ່ຣະຄົນດ້ວຍສີ ຖ້າມົວໄປເພລີດເພລີນຕິດໃຈໃນສິ່ງເຫລົ່ານີ້ ເປັນອັນວ່າບໍ່ໄດ້ຊານແນ່ ຕ້ອງໃຊ້ເອກັຄຄຕາເຜົາກາມັຈັນທນິວຣຕ໌ອັນເປັນປຕິປັກຜ໌ນີ້ເສັຽ

໒. **ພຍາປາທນິວຣຕ໌** ຄວາມມຸ່ງຈະປອງຮ້າຍຜູ້ອື່ນ ຊຶ່ງປຽບໄວ້ວ່າເຫມືອນນ້ຳທີ່ເດືອດປຸດໆ ຖ້າມົວແຕ່ຄຶດປອງຮ້າຍໃຜໆ ຢູ່ ຊານຈິຕກໍເກີດຂຶ້ນບໍ່ໄດ້ ຕ້ອງໃຊ້ປີຕິເຜົາພຍາປາທນິວຣຕ໌ອັນເປັນປຕິປັກຜ໌ນີ້ເສັຽ

໓. **ຖີນມິທສນິວຣຕ໌** ຄວາມຫົດຫູ່ ຄວາມທໍ້ຖອຍບໍ່ໃສ່ໃຈເປັນອັນດີຕໍ່ອາຣົມຕ໌ທີ່ເພັ່ງນັ້ນ ຊຶ່ງປຽບໄວ້ວ່າເຫມືອນນ້ຳທີ່ມີຈອກແຫນປົດບັງຢູ່ ຖ້າລົງໃຈທໍ້ຖອຍຄລາຍຄວາມໃສ່ໃຈໃນອາຣົມຕ໌ທີ່ເພັ່ງນັ້ນແລ້ວ ຍ່ອມບໍ່ເກີດຜົລໃຫ້ເຖິງຊານໄດ້ ຕ້ອງໃຊ້ວິຕົກເຜົາຖີນມິທສນິວຣຕ໌ອັນເປັນປຕິປັກຜ໌ນີ້ເສັຽ

໔. **ອຸທລັຈຈກຸກກຸຈຈນິວຣຕ໌** ຄວາມຟຸ້ງຊ່ານຣຳຄານໃຈ ຊຶ່ງປຽບໄວ້ວ່າ ເຫມືອນນ້ຳທີ່ຖືກລົມພັດກຣະເພື່ອມຢູ່ສເມີ ຖ້າຈິຕໃຈເລື່ອນລອຍຊັດສ່າຍຢູ່ເລື້ອຍໆ ແລ້ວກໍບໍ່ເປັນຊານຈິຕ ຕ້ອງໃຊ້ສຸຂເຜົາອຸທລັຈຈກຸກກຸຈຈນິວຣຕ໌ ອັນເປັນປຝິປັກພ໌ນີ້ເສັຽ

໕. **ວິຈິກິຈຉານິວຣຕ໌** ຄວາມລັງເລບໍ່ແນ່ໃຈ ຊຶ່ງປຽບໄວ້ວ່າເຫມືອນນ້ຳທີ່ຂຸ່ນເປັນຕົມ ຫຼືນ້ຳທີ່ຕັ້ງຢູ່ໃນທີ່ມືດ ຖ້າເກີດລັງເລບໍ່ແນ່ໃຈຢູ່ຕຣາບໃດ ກໍເປັນອັນວ່າບໍ່ທຳເຖິງຊານຢູ່ຕຣາບນັ້ນ ຕ້ອງໃຊ້ວິຈາຣເຜົາວິຈິກິຈຉານິວຣຕ໌ ອັນເປັນປຝິປັກພ໌ເສັຽ

## ການເຜົານິວຣຕ໌

ການເຜົາ ການຂົ່ມ ການທຳລາຍຫຼືການປຣະຫານນິວຣຕ໌ນີ້ ກ່າວສຣຸປຢ່າງສັ້ນໆ ກໍວ່າຕ້ອງໃຊ້

| | | |
|---|---|---|
| ວິຕົກ | ເຜົາ | ຖີນມິທນິວຣຕ໌ |
| ວິຈາຣ | ເຜົາ | ວິຈິກິຈຉານິວຣຕ໌ |
| ປີຕິ | ເຜົາ | ພຍາປາທນິວຣຕ໌ |
| ສຸຂ | ເຜົາ | ອຸທຣິຈຈກຸກກຸຈຈນິວຣຕ໌ |
| ເອກັຄຄຕາ | ເຜົາ | ກາມຈັນທນິວຣຕ໌ |

ຕໍ່ເມື່ອເຜົາຫຼືຂົ່ມນິວຣຕ໌ຊຶ່ງເປັນປຝິປັກພ໌ທັມມ໌ອັນເປັນເຄື່ອງຂັດຂວາງບໍ່ໃຫ້ເກີດຊານນີ້ໄດ້ເມື່ອໃດຊານຈິຕຈຶ່ງຈະເກີດຂຶ້ນໄດ້ເມື່ອນັ້ນ ຖ້ານິວຣຕ໌ທັ້ງ ໕ ນີ້ຍັງຄົງຢູ່ແມ້ແຕ່ຢ່າງດຽວ ຊານຈິຕກໍຈະເກີດຂຶ້ນບໍ່ໄດ້ເລີຍ

ເຫຕຸນີ້ **ວິຕົກ ວິຈາຣ ປີຕິ ສຸຂ ເອກັຄຄຕາ** ຈຶ່ງເປັນສ່ວນສຳສັນຍິ່ງທີ່ເປັນປັຈຈັຍໃຫ້ເກີດຊານຈິຕ ດັ່ງນັ້ນຈຶ່ງເອີ້ນທັມມ໌ ໕ ປຣະການ ຄື **ວິຕົກ ວິຈາຣ ປີຕິ ສຸຂ ເອກັຄຄຕາ** ນີ້ວ່າເປັນ **ອົງຄ໌ຊານ** ເພາະເປັນອົງຄ໌ສຳສັນທີ່ທຳໃຫ້ເກີດຊານຈິຕ

ການຂົ່ມນິວຣຕ໌ດ້ວຍອຳນາຈແຫ່ງຊານນີ້ ເອີ້ນວ່າ **ວິກຂັມກນປຫານ** ເປັນການປຣະຫານໄວ້ໄດ້ນານຕຣາບເທົ່າທີ່ຊານຍັງບໍ່ເສື່ອມ ຊຶ່ງປຽບໄວ້ວ່າຄືຈັ່ງຫີນທັບຫຍ້າ ຖ້າບໍ່ຍົກຫີນອອກ ຫຍ້າກໍຂຶ້ນບໍ່ໄດ້ຈັ່ງໃດຖ້າຊານຍັງບໍ່ເສື່ອມນິວຣຕ໌ກໍບໍ່ມີໂອກາສຈະກຳເຣີບຂຶ້ນໄດ້ຈັ່ງຊັ່ນ ຫຼືຈະກ່າວອີກນັຍນຶ່ງວ່າ ນິວຣຕ໌ກຳເຣີບຂຶ້ນໄດ້ເມື່ອໃດ ຊານກໍເສື່ອມໄປເມື່ອນັ້ນ

## ອົງຄ໌ຊານ ໕ ເຜົານິວຣຕ໌ ໕ ປຣະການໃດນັ້ນ ມີອະທິບາຍໄວ້ດັ່ງຕໍ່ໄປນີ້

໑. **ວິຕົກ** ຄືການຍົກຈິຕຂຶ້ນສູ່ອາຣົມຕ໌ ທຳອິດທຳຊານຕ້ອງມີສິ່ງສຳຫລັບເພັ່ງ ເປັນຕົ້ນວ່າ ໃຊ້ດິນມາທຳເປັນດວງກສິຕ ຕ້ອງຍົກຈິຕຂຶ້ນສູ່ອາຣົມຕ໌ ຄື ດວງກສິຕນີ້ຫມາຍຄວາມວ່າ ຕ້ອງເພັ່ງດວງກສິຕ ບໍ່ໃຫ້ຈິຕໃຈໄປຄຶກຫຍັງອື່ນ ຖ້າໄປຄຶກ ແນວອື່ນກໍຫມາຍຄວາມວ່າມີ **ຖີນມິທຂະ** ຄືຈິຕຫົດຫູ່ທໍ້ຖອຍຈາກອາຣົມຕ໌ທີ່ເພັ່ງ ຄລາຍຄວາມໃສ່ໃຈໃນອາຣົມຕ໌ທີ່ເພັ່ງ ເປັນຈິຕທີ່ຕົກໄປຈາກດວງກສິຕແລ້ວ ຕ້ອງຍົກຈິຕໃຫ້ກັບມາສູ່ດວງກສິຕໃຫມ່ ຄືໃຫ້ເພັ່ງດວງກສິຕອີກ ຈົນບໍ່ເຄລື່ອນໄປຈາກດວງກສິຕເລີຍເຊັ່ນນີ້ ເປັນອັນວ່າມີວິຕົກໂດຍສົມບູຣຕ໌ ເມື່ອຈິຕມີວິຕົກຢູ່ສະເພາະດວງກສິຕ ກໍໄດ້ວ່າຊື່ວ່າເຜົາຫຼືຂົ່ມຖີນມິທຂະ ໄດ້ແລ້ວ ເພາະຈິຕໃຈບໍ່ທໍ້ຖອຍຄລາດຄລາຍໄປຈາກດວງກສິຕເລີຍ

໔. **ວິຈາຣ** ຄືການປະຄອງຈິດໃຫ້ມັ່ນຢູ່ໃນອາຣົມທີ່ເພັ່ງ ເມື່ອວິຕົກຍົກຈິດຂຶ້ນສູ່ອາຣົມທີ່ເພັ່ງແລ້ວ ວິຈາຣກໍ່ປະຄອງບໍ່ໃຫ້ຕົກໄປຈາກອາຣົມທີ່ເພັ່ງ ບໍ່ໃຫ້ມີການລັງເລໃຈວ່າ ເພັ່ງເຊັ່ນນີ້ຈະໄດ້ຊານແທ້ບໍ່ ຖ້າເກີດລັງເລໃຈຂຶ້ນ ກໍ່ຈະຫນ່າຍໃນການປະຄອງຈິດ ຈິດກໍ່ຈະຕົກໄປຈາກອາຣົມທີ່ເພັ່ງ ຄວາມລັງເລໃຈເຊັ່ນນີ້ກໍ່ຄື **ວິຈິກິຈຈາ** ເມື່ອປະຄອງຈິດບໍ່ຕົກໄປຈາກອາຣົມທີ່ເພັ່ງໂດຍປາສຈາກຄວາມລັງເລໃຈ ກໍ່ໄດ້ຊື່ວ່າມີ **ວິຈາຣໂດຍສົມບູຣ** ເຜົາຫຼືຂົ່ມວິຈິກິຈຈາໄດ້ແລ້ວ

໓. **ປີຕິ** ຄືຄວາມປລາບປລື້ມໃຈ ເອີບອິ່ມໃຈໃນການເພັ່ງອາຣົມ ເມື່ອໄດ້ຍົກຈິດຂຶ້ນສູ່ອາຣົມປະຄອງຈິດໃຫ້ມັ່ນຢູ່ໃນອາຣົມ ໂດຍປາສຈາກການທໍ້ຖອຍແລະລັງເລໃຈແລ້ວ ຍ່ອມເກີດຄວາມປລາບປລື້ມເອີບອິ່ມໃຈໃນການກະທຳເຊັ່ນນັ້ນ ຂະນະທີ່ຈິດມີປີຕິປລາບປລື້ມເອີບອິ່ມໃຈຢູ່ ຂະນະນັ້ນຈິດກໍ່ບໍ່ໄດ້ຄິດໄປເຖິງຄວາມພຍາບາທມຸ່ງມາດຈະເຮັດຮ້າຍຂຸ່ນເຄືອງໃຜ ຈຶ່ງໄດ້ຊື່ວ່າປີຕິນີ້ ເຜົາຫຼືຂົ່ມພຍາບາທນິວຣນ໌ໄດ້ແລ້ວ

***ປີຕິ ຄວາມປລາບປລື້ມເອີບອິ່ມໃຈນີ້ມີເຖິງ ໕ ປະການ ຄື***

ກ. **ຂຸທ຺ທກາປີຕິ** ປລາບປລື້ມໃຈ ເລັກນ້ອຍ ພໍຮູ້ສຶກຂົນລຸກ
ຂ. **ຂຕິກາປີຕິ** ປລາບປລື້ມໃຈ ຊົ່ວຂະນະ ເກີດຂຶ້ນເລື້ອຍໆ
ຄ. **ໂອກ຺ກນ຺ຕິກາປີຕິ** ປລາບປລື້ມໃຈ ເຖິງກັບຕົວໂຍກຕົວໄຫວ
ງ. **ອຸພ຺ເພງຄາປີຕິ** ປລາບປລື້ມໃຈ ຈົນຕົວລອຍ
ຈ. **ຜຣຕາປີຕິ** ປລາບປລື້ມໃຈ ຈົນອິ່ມອາບຊາບຊ່ານໄປທົ່ວທັ້ງກາຍແລະໃຈ

ປີຕິທີ່ເປັນອົງຄ໌ຊານ ສາມາຖເຜົາຫຼືຂົ່ມພຍາປາທນິວຣນ໌ໄດ້ນັ້ນ ຕ້ອງເຖິງ ຜຣຕາປີຕິ ສ່ວນປີຕິອີກ ໔ ບໍ່ນັບວ່າເປັນອົງຄ໌ຊານ ເພາະຍັງເປັນຂອງຫຍາບແລະມີກຳລັງນ້ອຍຢູ່

໔. **ສຸຂ** ໃນອົງຄ໌ຊານນີ້ຫມາຍເຖິງຄວາມສຸຂໃຈ ຄື ໂສມນັສເວທນານັ້ນເອງ ເມື່ອຍົກຈິດຂຶ້ນສູ່ອາຣົມ ປະຄອງຈິດຈົນຕັ້ງມັ່ນຢູ່ໃນອາຣົມ ເຖິງກັບເກີດປີຕິເຊັ່ນນີ້ແລ້ວຍ່ອມເປັນສຸຂໃຈຫລາຍ ຄວາມສຸຂກໍ່ຄືຄວາມສງົບ ປາສຈາກຄວາມຟຸ້ງຊ່ານຣຳຄານໃຈເປັນທັມມດາ ຈຶ່ງໄດ້ຊື່ວ່າສຸຂນີ້ເຜົາຫຼື ຂົ່ມອຸທ຺ທັຈຈກຸກ຺ກຸຈຈນິວຣນ໌ໄດ້ແລ້ວ

໕. **ເອກັຄຄຕາ** ຄືຈິດທີ່ມີສມາທິແນ່ວແນ່ໃນອາຣົມດຽວ ເມື່ອຈິດຕັ້ງມັ່ນຢູ່ໃນອາຣົມທີ່ເພັ່ງດັ່ງທີ່ກ່າວມາເປັນລຳດັບເຊັ່ນນີ້ແລ້ວ ຂະນະນັ້ນຈິດໃຈກໍ່ບໍ່ໄດ້ມີອາຣົມອື່ນໃດອີກເລີຍ ຫມາຍຄວາມວ່າຂະນະນັ້ນບໍ່ໄດ້ຄຳນຶງເຖິງ **ຮູປ ສຽງ ກິ່ນ ຣົສ** ຫຼື **ການສັມຜັສຖືກຕ້ອງ**ແຕ່ປະການໃດໆ ທັ້ງຫມົດ ແນ່ວແນ່ແຕ່ອາຣົມທີ່ເພັ່ງຢ່າງດຽວເທົ່ານັ້ນ ຈຶ່ງໄດ້ຊື່ວ່າ **ເອກັຄຄຕາ** ນີ້ ***ເຜົາ*** ຫຼື ***ຂົ່ມກາມຈັນທນິວຣນ໌ໄດ້ແລ້ວ***

# ປຣະເພທແຫ່ງຊານ ໕

ຕາມນັຍແຫ່ງພຣະອະພິທັມມ໌ ຈຳແນກປຣະເພທແຫ່ງຊານ (ຄືຊານເພທ) ວ່າມີ ໕ ຊານ ເອີ້ນຊື່ວ່າ ຊານປັຍຈກນັຍ ຊານ ໕ ນີ້ໄດ້ແກ່

| ປຖົມຊານ | ມີອົງຄ໌ຊານ | ໕ | ຄື | ວິຕົກ | ວິຈາຣ | ປີຕິ | ສຸຂ | ເອກັຄຄຕາ |
|---|---|---|---|---|---|---|---|---|
| **ທຸຕິຢຊານ** | " | ໔ | " | - | ວິຈາຣ | ປີຕິ | ສຸຂ | ເອກັຄຄຕາ |
| **ຕຕິຢຊານ** | " | ໓ | " | - | - | ປີຕິ | ສຸຂ | ເອກັຄຄຕາ |
| **ຈຕຸຕຖຊານ** | " | ໒ | " | - | - | - | ສຸຂ | ເອກັຄຄຕາ |
| **ປັຍຈມຊານ** | " | ໒ | " | - | - | - | ອຸເປກຂາ | ເອກັຄຄຕາ |

ມີຂໍ້ທີ່ຄວຣສັງເກຕວ່າ ຈຕຸຕຖຊານກໍມີອົງຄ໌ຊານ ໒ ແລະປັຍຈມຊານກໍມີອົງຄ໌ຊານ ໒ ຊຶ່ງຈຳນວນນັ້ນເທົ່າກັນ ແຕ່ວ່າຊນິດຂອງອົງຄ໌ຊານນັ້ນບໍ່ເຫມືອນກັນ

໑. **ປຖົມຊານ** ຕ້ອງມີອົງຄ໌ຊານຄົບທັ້ງ ໕ ເພື່ອເປັນເຄື່ອງທຳລາຍ ເຄື່ອງປຣະຫາຣ ເຄື່ອງເຜົາ ເຄື່ອງຂົ່ມ ປຜິປັກບ໌ທັມມ໌ ຄືນິວຣຕ໌ທັງ ໕ ປຣະການດັ່ງທີ່ໄດ້ກ່າວແລ້ວທຳອິດນັ້ນ ປຖົມຊານກຸສົລຈິຕຈຶ່ງຈະເກີດໄດ້

ອີກຢ່າງ ໃນຂຕະທີ່ປຖົມຊານຈິຕເກີດນັ້ນ ເກີດພ້ອມກັບອົງຄ໌ຊານທັ້ງ ໕ ນີ້ ໃນຂຕະດຽວກັນດ້ວຍແລະໃນຂຕະນັ້ນເອງອົງຄ໌ຊານທັ້ງ ໕ ກໍເຜົາຫຼືຂົ່ມນິວຣຕ໌ທັ້ງ ໕ ໄປພ້ອມກັນໃນຂຕະດຽວກັນນັ້ນອີກດ້ວຍ ຫາແມ່ນວ່າອົງຄ໌ຊານເກີດທີລະອົງຄ໌ເຜົານິວຣຕ໌ທີລະຢ່າງບໍ່ ແມ້ໃນຊານຈິຕຊັ້ນອື່ນໆ ກໍເປັນເຊັ່ນທີ່ກ່າວນີ້

໒. **ທຸຕິຢຊານ** ມີອົງຄ໌ຊານພຽງ ໔ ໂດຍລະ ວິຕົກ ຊຶ່ງເປັນອົງຄ໌ຊານອົງຄ໌ທຳອິດໄດ້ ທີ່ລະວິຕົກເສັຽໄດ້ເພາະປຖົມຊານລາພີບຸຄຄົລ ຄືຜູ້ທີ່ໄດ້ປຖົມຊານ ຈະຕ້ອງຫັດເຂົ້າປຖົມຊານຈົນຊຳນິຊຳນານແຄລ່ວຄລ່ອງວ່ອງໄວເຖິງ ໕ ປຣະການ ທີ່ເອີ້ນວ່າມີ ວສີ ໕ ແລ້ວ ຈຶ່ງຈະເຣີ່ມທຳທຸຕິຢຊານໄດ້ ເມື່ອຈະຂຶ້ນທຸຕິຢຊານນັ້ນ ເຫັນວ່າວິຕົກທີ່ເປັນອົງຄ໌ຊານນີ້ມີສພາພທີ່ຫຍາບກວ່າອົງຄ໌ຊານອີກ ໔ ຄື ວິຈາຣ ປີຕິ ສຸຂ ເອກັຄຄຕາ ຈຶ່ງລະເສັຽ ແລ້ວເຣີ່ມຕົ້ນດ້ວຍການເພັ່ງປຜິກາຄນິມິຕເລີຍທີດຽວ ເພັ່ງປຜິກາຄນິມິຕຕາມວິທີກາຈົນທຸຕິຢຊານເກີດວສີ ໕ ແລະວິທີການຈເຣີນສມຖກາວນາຈົນຊານຈິຕເກີດນັ້ນ ມີສແດງຢູ່ໃນປຣິເຈທທີ່ ໙ ຈຶ່ງຂໍງົດບໍ່ກ່າວໃນທີ່ນີ້

ອີກຢ່າງ ການລະວິຕົກເພາະວ່າເປັນຂອງຫຍາບຕາມຫລັກທີ່ກ່າວແລ້ວນັ້ນ ຍັງເຫັນວ່າເປັນຕາຈະເປັນດັ່ງຕໍ່ໄປນີ້ດ້ວຍ

ກ. ເພາະຄວາມຊຳນາຍ ມີວສີໃນປຖົມຊານນັ້ນເອງ ຈຶ່ງເຣີ່ມທຳທຸຕິຢຊານດ້ວຍການເພັ່ງປຜິກາຄນິມິຕເລີຍທີດຽວ ບໍ່ຕ້ອງເພັ່ງດວງກສິຕເຫມືອນເມື່ອເຣີ່ມທຳປຖົມຊານ ນີ້ກໍຫມາຍຄວາມວ່າ ບໍ່ຕ້ອງໃຊ້ວິຕົກຍົກຈິຕຂຶ້ນເພັ່ງດວງກສິຕ ຖ້າຈະປຽບກໍເຫັນຈະປຽບໄດ້ວ່າ ເຫມືອນເດັກທີ່ເຣີ່ມຮຽນເລຂບວກວ່າ ໔ ກັບ ໓ ບວກກັນໄດ້ເທົ່າໃດ ຊຶ່ງອາຈຈະຕ້ອງທຳພິລຶດ

ຄືຍົກມືຊ້າຍຂຶ້ນ ໔ ນິ້ວ ຍົກມືຂວາຂຶ້ນອີກ ໓ ນິ້ວ ແລ້ວນັບຈຶ່ງຈະຕອບໄດ້ວ່າເປັນ ໗ ນີ່ແປລວ່າຕ້ອງມີພິລີໃນການຄິດ ຄືມີວິຕົກ ຖ້າຫາກວ່າຮຽນມາຄລ່ອງແຄລ່ວຊຳນານແລ້ວ ກໍຕອບໄດ້ໃນທັນທີທີ່ຖາມ ວ່າເປັນ ໗ ໂດຍບໍ່ຕ້ອງຊູນິ້ວ ບໍ່ຕ້ອງນັບ ເທົ່າກັບວ່າບໍ່ຕ້ອງຄິດ ບໍ່ຕ້ອງໃຊ້ວິຕົກ

ຂ. ຜູ້ເຂົ້າປຖົມຊານຈົນເຖິງມີວສີແລ້ວ ຍ່ອມບໍ່ມີຄວາມທົດທູ່ທໍ້ຖອຍ ບໍ່ຫຍ່ອນຄລາຍຄວາມໃສ່ໃຈເປັນອັນດີຕໍ່ ອາຣົມຕ໌ນັ້ນແລ້ວ ຄືປຣາສຈາກຖີນມິທຘະແລ້ວ ຈຶ່ງບໍ່ຕ້ອງອາສັຍວິຕົກຫຼືບໍ່ຕ້ອງໃຊ້ວິຕົກມາເຜົາ ມາຂົ່ມຖີນມິທຘະອີກ ເພາະປຖົມຊານໄດ້ຂົ່ມຖີນມິທຘະຈົນຢູ່ມືແລ້ວ

໓. ຕຕິຢຊານ ມີອົງຄ໌ຊານພຽງ ໓ ຄື ປີຕິ ສຸຂ ເອກັຄຄຕາ ໂດຍລະວິຈາຣ ຊຶ່ງເປັນອົງຄ໌ຊານອົງຄ໌ທີ່ ໔ ໄດ້ອີກອົງຄ໌ ທີ່ລະວິຈາຣໄດ້ອີກ ເພາະທຸຕິຢຊານລາภີບຸຄຄົລ ຈະຕ້ອງມີວສີໃນທຸຕິຢຊານນັ້ນແລ້ວ ຈຶ່ງຈະເຣີ່ມທຳຕຕິຢຊານໄດ້ ເມື່ອຈະຂຶ້ນຕຕິຢຊານ ກໍເຫັນໂທສຂອງວິຈາຣວ່າມີສภາພທີ່ຫຍາບກວ່າ ປີຕິ ສຸຂ ເອກັຄຄຕາ ຈຶ່ງລະວິຈາຣອັນເປັນ ອົງຄ໌ຊານທີ່ມີສภາພຫຍາບນັ້ນເສັຽ ໃຫ້ສົມກັບຕຕິຢຊານອັນເປັນຊານທີ່ປຣະນີຕກວ່າທຸຕິຢຊານ ຈຶ່ງເຣີ່ມຕົ້ນດ້ວຍການເພັ່ງປຖວີກະສິນນິມິຕຈົນກວ່າຕຕິຢຊານຈິຕຈະເກີດ ທີ່ຕຕິຢຊານລະວິຈາຣໄດ້ ນອກຈາກຫລັກທີ່ກ່າວແລ້ວຂ້າງເທິງນີ້ ເປັນຕາຈະເປັນດັ່ງນີ້ດ້ວຍຄື ປຖົມຊານໄດ້ເຜົາໄດ້ຂົ່ມຄວາມ ລັງເລໃຈ ຄືວິຈິກິຈສາມາແລ້ວ ແລະທຸຕິຢຊານກໍໄດ້ເຜົາໄດ້ຂົ່ມຊ້ຳອີກຕໍ່ນຶ່ງດ້ວຍ ຂົ່ມວິຈິກິຈສາເສັຽຈົນຢູ່ມືແລ້ວ ໃນການທຳຕຕິຢຊານ ຈຶ່ງບໍ່ຕ້ອງອາສັຍວິຈາຣມາເຜົາຂົ່ມວິຈິກິຈສານິວຣຕ໌ນີ້ອີກ

໔. ຈຕຸຕຖຊານ ມີອົງຄ໌ຊານພຽງ ໒ ເທົ່ານັ້ນ ໂດຍລະ ປີຕິ ໄດ້ອີກ ຄົງເຫລືອແຕ່ ສຸຂ ກັບ ເອກັຄຄຕາ ຕຕິຢຊານລາภີບຸຄຄົລຜູ້ມີວສີໃນຕຕິຢຊານແລ້ວ ກໍພິຈາຣະນາເຫັນວ່າປີຕິທີ່ເປັນອົງຄ໌ຊານອົງຄ໌ນຶ່ງນັ້ນ ເປັນຄວາມປລາບປລື້ມເອີບອິ່ມໃຈຈົນຊາບຊ່ານໄປທົ່ວທັ້ງກາຍແລະໃຈນີ້ ມີອາການໂນ້ມອຽງໄປໃນທາງທີ່ມີຄວາມລິງໂລດໃຈຢູ່ ນັບໄດ້ວ່າມີສภາພເປັນຂອງຫຍາບຢູ່ ເມື່ອຕ້ອງການຊານທີ່ປຣະນີຕຂຶ້ນໄປອີກກໍບໍ່ຄວຣທີ່ຈະຕິດໃຈໃນຂອງຫຍາບເຊັ່ນນີ້ໃນເວລາທີ່ຈເຣີນເພື່ອຂຶ້ນຈຕຸຕຖຊານ ຈຶ່ງລະປີຕິເສັຽ ດັ່ງນັ້ນ ເມື່ອຈຕຸຕຖຊານຈິຕເກີດ ຈຶ່ງເຫລືອອົງຄ໌ຊານພຽງ ໒ ອົງຄ໌ ຄື ສຸຂກັບເອກັຄຄຕາ

໕. ປັຍຈມຊານ ມີອົງຄ໌ຊານພຽງ ໒ ເທົ່າກັນກັບຈຕຸຕຖຊານ ແຕ່ບໍ່ເຫມືອນກັນກັບຈຕຸຕຖຊານ ກ່າວຄື ຈຕຸຕຖຊານມີສຸຂກັບເອກັຄຄຕາເປັນອົງຄ໌ຊານ ສ່ວນປັຍຈມຊານນີ້ມີອຸເບກຂາກັບເອກັຄຄຕາເປັນອົງຄ໌ຊານ ສຸຂທີ່ເປັນອົງຄ໌ຊານນີ້ ຫມາຍເຖິງສຸຂໃຈ ຄືໂສມນັສເວທນານັ້ນເອງ ໄດ້ກ່າວມາແລ້ວໃນຕອນຕົ້ນວ່າໂສມນັສເວທນາໃນຊານເປັນຂອງຫຍາບກວ່າ ມີອານິສົງສ໌ນ້ອຍກວ່າອຸເບກຂາເວທນາໃນຊານ ເມື່ອຈຕຸຕຖຊານລາภີບຸຄຄົລມີວສີໃນຈຕຸຕຖຊານແລ້ວ ພິຈາຣະນາເຫັນວ່າປັຍຈມຊານເປັນຊານທີ່ປຣະນີຕກວ່າຈຕຸຕຖຊານ ຈຶ່ງໄດ້ລະສຸຂເສັຽ ມາຕັ້ງຢູ່ໃນຄວາມວາງເສີຍຕໍ່ຄວາມສຸຂ ຄືອຸເບກຂາ ດັ່ງນັ້ນຂະນະທີ່ເກີດປັຍຈມຊານຈິຕຈຶ່ງພ້ອມດ້ວຍອົງຄ໌ຊານ ໒ ຄື ອຸເບກຂາກັບເອກັຄຄຕາ

ດັ່ງນີ້ຈະເຫັນໄດ້ວ່າ ປຣະເภທແຫ່ງຊານ ໕ ຫຼື ຣູປາວຈຣຈິຕມີ ໕ ຊານນັ້ນແຕກຕ່າງກັນທີ່ອົງຄ໌ຊານແຕ່ລະຊານແຕ່ລະຊັ້ນ ຊຶ່ງມີຈຳນວນຫລາຍນ້ອຍລົດຫລັ່ນກັນເປັນຂໍ້ສຳສັຍ ສ່ວນອາຣົມຕ໌ນັ້ນອາຈຈະເປັນອາຣົມຕ໌ຢ່າງດຽວກັນ ບໍ່ແຕກຕ່າງກັນກໍໄດ້

# ອາຣົມທີ່ໃຫ້ເກີດຊານ

ອາຣົມທີ່ໃຊ້ເພັ່ງໃຫ້ເກີດຊານຈິຕນັ້ນເອີ້ນວ່າ **ສມຖກັມມັຜຖານ** ສແດງໄວ້ໂດຍລະອຽດໃນ ***"ປຣິຈເຊທທີ່ ໙"*** ໃນທີ່ນີ້ຂໍຍົກມາກ່າວ ໂດຍຫຍໍ້ພໍເປັນເຄົ້າທີ່ກ່ຽວແກ່ຊານຈິຕນີ້ ຄື

**ປຖົມຊານ** ມີອາຣົມໄດ້ ໒໕ ຢ່າງ ໄດ້ແກ່ ***ກສິຕ ໑໐ ອສຸກ ໑໐ ອານາປານສຕິ ໑ ກາຍຄຕາສຕິ ໑*** ແລະ ***ພຣົຫມວິຫາຕ ໓*** (ພຣົຫມວິຫາຕ ໓ ຄື ເມຕຕາ ກຣຸຕາ ມຸທິຕາ)

**ທຸຕິຍຊານ ຕຕິຍຊານ** ແລະ **ຈຕຸຕຖຊານ** ມີອາຣົມໄດ້ ໑໔ ຢ່າງ ໄດ້ແກ່ ***ກສິຕ ໑໐ ອານາປານສຕິ ໑*** ແລະ ***ພຣົຫມວິຫາຕ ໓***

**ປັນຈມຊານ** ມີອາຣົມໄດ້ ໑໒ ຢ່າງ ໄດ້ແກ່ ***ກສິຕ ໑໐ ອານາປານສຕິ ໑*** ແລະ***ອຸເບກຂາພຣົຫມວິຫາຕ ໑***

# ຊານຈຕຸກນັຍ

ຕາມທີ່ກ່າວມາແລ້ວເປັນການກ່າວຕາມນັຍແຫ່ງພຣະອະພິທັມ ຊຶ່ງຈຳແນກປຣະເພທແຫ່ງຊານອອກເປັນຊານ ໕ ເອີ້ນວ່າ ຊານປັນຈກນັຍ

ແຕ່ຕາມນັຍແຫ່ງພຣະສຸຕຕັນຕປິຝົກ ຄືຕາມແນວແຫ່ງພຣະສູຕຣ໌ ຈຳແນກປຣະເພທແຫ່ງຊານອອກເປັນຊານ ໔ ເອີ້ນວ່າ ຊານຈຕຸກນັຍ ດັ່ງນີ້:

| ປຖົມຊານ | ມີອົງຄ໌ຊານ | ໕ | ຄື | ວິຕົກ | ວິຈາຣ | ປິຕິ | ສຸຂ | ເອກັຄຄຕາ |
|---|---|---|---|---|---|---|---|---|
| **ທຸຕິຍຊານ** | " | ໓ | " | - | - | ປິຕິ | ສຸຂ | ເອກັຄຄຕາ |
| **ຕຕິຍຊານ** | " | ໒ | " | - | - | - | ສຸຂ | ເອກັຄຄຕາ |
| **ຈຕຸຕຖຊານ** | " | ໒ | " | - | - | - | ອຸເບກຂາ | ເອກັຄຄຕາ |

ນ້ອຍກວ່າຕາມນັຍແຫ່ງພຣະອະພິທັມ ໑ ຊານ ໂດຍທຸຕິຍຊານ ລະໄດ້ທັງວິຕົກແລະວິຈາຣພ້ອມກັນເລີຍ ເທົ່າກັບຣວມທຸຕິຍຊານກັບຕຕິຍຊານ ທາງປັນຈກນັຍ ໒ ຊານ ຣວມກັນເປັນຊານດຽວ ຊຶ່ງທາງຈຕຸກນັຍຈັດເປັນທຸຕິຍຊານເທົ່ານັ້ນເອງ ຊານອື່ນໆນອກນັ້ນກໍທຳນອງດຽວກັນ

ສ່ວນທາງພຣະອະພິທັມທີ່ຈຳແນກຊານເປັນປັນຈກນັຍ ກໍເພື່ອໃຫ້ຕຣົງຕາມສພາວະ ຕຣົງຕາມປຣະເພທຈິຕ ແລະຕຣົງຕາມຈຳນວນຂອງຈິຕທີ່ມີຢູ່ ແລະທີ່ທຸຕິຍຊານລະໄດ້ແຕ່ພຽງວິຕົກຢ່າງດຽວ ຕໍ່ເມື່ອຕຕິຍຊານຈຶ່ງຈະລະວິຈາຣໄດ້ອີກນັ້ນກໍເພາະເປັນມັນທບຸຄຄົລ ຄືຜູ້ຮູ້ຊ້າ ຈຶ່ງລະໄດ້ພຽງຊານລະນຶ່ງອົງຄ໌ຊານເທົ່ານັ້ນ ແຕ່ຖ້າເປັນ ຕິກຂບຸຄຄົລ ຄືຜູ້ຮູ້ໄວ ກໍລະໄດ້ທີດຽວທັງວິຕົກ ວິຈາຣເຫມືອນກັນ

***ເຫຕຸນີ້ທາງພຣະສູຕຣ໌ຈຶ່ງສແດງວ່າ ຣູປຊານມີ ໔ ອຣູປຊານມີ ໔*** *ຣວມເປັນຊານ ๘ ແລະເມື່ອກ່າວເຖິງການເຂົ້າຊານສມາບັຕິຈຶ່ງ ກ່າວວ່າສມາບັຕິ ๘*

***ທາງພຣະອາພິທັມມ໌ສແດງວ່າ ຣູປຊານມີ ໕ ອຣູປຊານມີ ໔*** *ຣວມເປັນຊານ ๙ ສມາບັຕິ ๙*

ຊານປັນຈກນັຍຕາມແນວແຫ່ງພຣະອາພິທັມມ໌ທີ່ກ່າວເຖິງຢູ່ນີ້ ມີຊານ ໕ ແລະເມື່ອຈຳແນກໂດຍຊາຕິເພທ ຄືຕາມປຣະເພທແຫ່ງຊາຕິ ມີ ກຸສົລ ວິບາກ ກິຣິຍາ ແລ້ວ ກໍມີ ຣູປາວຈຣກຸສົລຈິຕ ໕ ຣູປາວຈຣວິບາກຈິຕ ໕ ຣູປາວຈຣກິຣິຍາຈິຕ ໕ ຣວມ ໑໕ ດວງ ມີຣາຍລະອຽດດັ່ງຕໍ່ ໄປນີ້

## ຣູປາວຈຣກຸສົລຈິຕ

ຣູປາວຈຣກຸສົລຈິຕ ເປັນຈິຕທີ່ບຳເພັນຈົນເຖິງຣູປຊານ ເປັນຈິຕທີ່ຕົກແຕ່ງບຸນກຸສົລໄວ້ເພື່ອຮັບສົມບັຕິ ຄື ເປັນຣູປພຣົຫ໌ມໃນພຣົຫ໌ມໂລກ ມີຈຳນວນ ໕ ດວງ ຄື

**໑. ວິຕກ຺ກວິຈາຣປີຕິສຸເຂກຄ຺ຄຕາ ສຫິຕံ ປຖມຊານກຸສລຈິຕ຺ຕံ** ຣູປາວຈຣກຸສົລດວງທີ່ ໑ ຈິຕເກີດພ້ອມດ້ວຍ ວິຕົກ ວິຈາຣ ປີຕິ ສຸຂ ເອກັຄຄຕາ ເປັນ ***ປຖົມຊານກຸສົລ***

**໒. ວິຈາຣປີຕິສຸເຂກຄ຺ຄຕາ ສຫິຕံ ທຸຕິຍຊານກຸສລຈິຕ຺ຕံ** ຣູປາວຈຣກຸສົລດວງທີ່ ໒ ຈິຕເກີດພ້ອມດ້ວຍ ວິຈາຣ ປີຕິ ສຸຂ ເອກັຄຄຕາ ເປັນ ***ທຸຕິຍຊານກຸສົລ***

**໓. ປີຕິສຸເຂກຄ຺ຄຕາ ສຫິຕံ ຕຕິຍຊານກຸສລຈິຕ຺ຕံ** ຣູປາວຈຣກຸສົລດວງທີ່ ໓ ຈິຕເກີດພ້ອມດ້ວຍ ປີຕິ ສຸຂ ເອກັຄຄຕາ ເປັນ ***ຕຕິຍຊານກຸສົລ***

**໔. ສຸເຂກຄ຺ຄຕາ ສຫິຕံ ຈຕຸຕ຺ຖຊານກຸສລຈິຕ຺ຕံ** ຣູປາວຈຣກຸສົລດວງທີ່ ໔ ຈິຕເກີດພ້ອມດ້ວຍ ສຸຂ ເອກັຄຄຕາ ເປັນ ***ຈຕຸຕຖຊານກຸສົລ***

**໕. ອຸເປກ຺ເຂກຄ຺ຄຕາ ສຫິຕံ ປຍ຺ຈມຊານກຸສລຈິຕ຺ຕံ** ຣູປາວຈຣກຸສົລດວງທີ່ ໕ ຈິຕເກີດພ້ອມດ້ວຍ ອຸເບກຂາ ເອກັຄຄຕາ ເປັນ ***ປັນຈມຊານກຸສົລ***

## ຣູປາວຈຣວິບາກຈິຕ

ຣູປາວຈຣວິບາກຈິຕ ເປັນຈິຕທີ່ເປັນຜົລຂອງຣູປາວຈຣກຸສົລຈິຕ ເປັນຈິຕທີ່ສເວີຍສົມບັຕິຊຶ່ງຣູປາວຈຣກຸສົລຈິຕໄດ້ຕົກແຕ່ງມາໃຫ້ ເປັນຈິຕຂອງຣູປພຣົຫ໌ມໃນພຣົຫ໌ມໂລໃຈຳນວນ ໕ ດວງ ອັນເປັນຈຳນວນທີ່ເທົ່າກັນກັບຣູປາວຈຣກຸສົລຈິຕ ຣູປາວຈຣວິບາກຈິຕ ໕ ດວງ ຄື

**໑. ວິຕກ຺ກວິຈາຣປີຕິສຸເຂກຄ຺ຄຕາ ສຫິຕံ ປຖມຊານວິປາກຈິຕ຺ຕံ** ຣູປາວຈຣວິບາກດວງທີ່ ໑ ຈິຕເກີດພ້ອມດ້ວຍ ວິຕົກ ວິຈາຣ ປີຕິ ສຸຂ ເອກັຄຄຕາ ເປັນປຖົມຊານວິບາກ

**໒. ວິຈາຣປີຕິສຸເຂກຄຄຕາ ສຫິຕ຺ ທຸຕິຍຊານວິປາກຈິຕ຺ຕ຺** ຮູປາວຈຣວິບາກດວງທີ່ ໒ ຈິຕເກີດພ້ອມດ້ວຍ ວິຈາຣ ປີຕິ ສຸຂ ເອກັຄຄຕາ ເປັນທຸຕິຍຊານວິບາກ

**໓. ປີຕິສຸເຂກຄຄຕາ ສຫິຕ຺ ຕຕິຍຊານວິປາກຈິຕ຺ຕ຺** ຮູປາວຈຣວິບາກດວງທີ່ ໓ ຈິຕເກີດພ້ອມດ້ວຍ ປີຕິ ສຸຂ ເອກັຄຄຕາ ເປັນຕຕິຍຊານວິບາກ

**໔. ສຸເຂກຄຄຕາ ສຫິຕ຺ ຈຕຸຕ຺ຖຊານວິປາກຈິຕ຺ຕ຺** ຮູປາວຈຣວິບາກດວງທີ່ ໔ ຈິຕເກີດພ້ອມດ້ວຍ ສຸຂ ເອກັຄຄຕາ ເປັນຈຕຸຕຖຊານວິບາກ

**໕. ອຸເປກ຺ເຂກຄຄຕາ ສຫິຕ຺ ປຎ຺ຈມຊານວິປາກຈິຕ຺ຕ຺** ຮູປາວຈຣວິບາກດວງທີ່ ໕ ຈິຕເກີດພ້ອມດ້ວຍ ອຸເບກຂາ ເອກັຄຄຕາ ເປັນປັຎຈມຊານວິບາກ

# ຮູປາວຈຣກິຣິຍາຈິຕ

ຮູປາວຈຣກິຣິຍາຈິຕ ເປັນຈິຕໂດຍສະເພາະຂອງພຣະອຣຫັນຕ໌ທີ່ເຂົ້າຫຼູປຊານຕາມສຳນວນເກົ່າອະທິບາຍວ່າ ຮູປາວຈຣກຸສົລກັບຮູປາວຈຣ- ກິຣິຍາກໍເຫມືອນກັນ ຕ່າງແຕ່ທີ່ເກີດຮູປາວຈຣກຸສົລເກີດໃນສັນດານປຸຖຸຊົນແລະເສກຂບຸຄຄົລ (ເສກຂບຸຄຄົລ ຄື ພຣະໂສດາບັນ ພຣະສກທາຄາມີ ພຣະອນາຄາມີ) ສ່ວນຮູປາວຈຣກິຣິຍາເກີດໃນສັນດານພຣະຂີຕາສົພ (ພຣະຂີຕາສົພ ຫຼື ອເສກຂບຸຄຄົລ ຄື ພຣະອຣຫັນຕ໌) ຮູປາວຈຣກິຣິຍາຈິຕ ມີຈຳນວນ ໕ ດວງ ຄື

**໑. ວິຕກ຺ກວິຈາຣປີຕິສຸເຂກຄຄຕາ ສຫິຕ຺ ປຖມຊານກິຣິຍາຈິຕ຺ຕ຺** ຮູປາວຈຣກິຣິຍາດວງທີ່ ໑ ຈິຕເກີດພ້ອມດ້ວຍ ວິຕົກ ວິຈາຣ ປີຕິ ສຸຂ ເອກັຄຄຕາ ເປັນປຖົມຊານກິຣິຍາ

**໒. ວິຈາຣປີຕິສຸເຂກຄຄຕາ ສຫິຕ຺ ທຸຕິຍຊານກິຣິຍາຈິຕ຺ຕ຺** ຮູປາວຈຣກິຣິຍາດວງທີ່ ໒ ຈິຕເກີດພ້ອມດ້ວຍ ວິຈາຣ ປີຕິ ສຸຂ ເອກັຄຄຕາ ເປັນທຸຕິຍຊານກິຣິຍາ

**໓. ປີຕິສຸເຂກຄຄຕາ ສຫິຕ຺ ຕຕິຍຊານກິຣິຍາຈິຕ຺ຕ຺** ຮູປາວຈຣກິຣິຍາດວງທີ່ ໓ ຈິຕເກີດພ້ອມດ້ວຍ ປີຕິ ສຸຂ ເອກັຄຄຕາ ເປັນຕຕິຍຊານກິຣິຍາ

**໔. ສຸເຂກຄຄຕາ ສຫິຕ຺ ຈຕຸຕ຺ຖຊານກິຣິຍາຈິຕ຺ຕ຺** ຮູປາວຈຣກິຣິຍາດວງທີ່ ໔ ຈິຕເກີດພ້ອມດ້ວຍ ສຸຂ ເອກັຄຄຕາ ເປັນຈຕຸຕຖຊານກິຣິຍາ

**໕. ອຸເປກ຺ເຂກຄຄຕາ ສຫິຕ຺ ປຎ຺ຈມຊານກິຣິຍາຈິຕ຺ຕ຺** ຮູປາວຈຣກິຣິຍາດວງທີ່ ໕ ຈິຕເກີດພ້ອມດ້ວຍ ອຸເບກຂາ ເອກັຄຄຕາ ເປັນປັຎຈມຊານກິຣິຍາ

# ອຣູປາວຈຣຈິຕ

ອຣູປາວຈຣຈິຕ ເປັນຈິຕທີ່ເຖິງຊຶ່ງອຣູປຊານ ເປັນຈິຕທີ່ສ່ວນຫລາຍທ່ອງທ່ຽວ ຢູ່ໃນອຣູປພູມີ ມີຄາຖາສັງຄຫະເປັນຄາຖາທີ່ ໙ ສແດງວ່າ

໙. ອາລມ຺ພນປ຺ປເພເທນ ຈຕຸຣາຣຸປ຺ປມານສໍ

ປຸຍ຺ຍປາກກິຣິຢາເພທາ ປຸນ ທ຺ວາທສທາ ຖິຕໍ ໆ

ແປລຄວາມວ່າ ອຣູປາວຈຣຈິຕນັ້ນ ກ່າວໂດຍປຣະເພທແຫ່ງອາຣົມຕ໌ ກໍມີ ໔ ແລ້ວຈຳແນກຕາມປຣະເພທແຫ່ງຊາຕິ ກຸສົລ ວິບາກ ກິຣິຍາ ອີກ ຈຶ່ງເປັນ ໑໒ ດວງ

ມີຄຳອະທິບາຍວ່າ ອຣູປາວຈຣຈິຕ ກ່າວໂດຍປຣະເພທແຫ່ງອາຣົມຕ໌ແລ້ວມີ ໔ ຄື

໑. ມີ **ກສິຕຸຄຘາຜິມາກາສບັນຍັຕິ** ເປັນອາຣົມຕ໌ ຫມາຍເຖິງອາກາສທີ່ເພີກກສິຕແລ້ວ ເປັນອາກາສທີ່ວ່າງເປົ່າບໍ່ມີທີ່ສິ້ນສຸດເປັນ ອາຣົມຕ໌ ໂດຍບໍຣິກັມມ໌ວ່າ **ອາກາໂສ ອນນ຺ໂຕ** ອາກາສບໍ່ມີທີ່ສິ້ນສຸດຈົນກວ່າຊານຈິຕຈະເກີດຂຶ້ນ ຊານຈິຕທີ່ເກີດຂຶ້ນໂດຍມີກສິຕຸຄຘາຜິມາກາສບັນຍັຕິ ເປັນອາຣົມຕ໌ນີ້ຊື່ວ່າ ອາກາສານັນຈາຍຕນຊານບາງເທື່ອເອີ້ນວ່າ ປກຖົມາຕູປຈິຕ ຄື ປກຖົມອຣູປຈິຕ ເປັນອຣູປາວຈຣຈິຕຂັ້ນຕົ້ນ

໒. ມີ **ອາກາສານັນຈາຍຕນຈິຕ** ເປັນອາຣົມຕ໌ ຫມາຍເຖິງວິຍຍານຕຄືຕົວຮູ້ ຫນ່ວງເອົາຕົວທີ່ຮູ້ວ່າອາກາສບໍ່ມີທີ່ສິ້ນສຸດນັ້ນແຫລະ ເປັນອາຣົມຕ໌ ກ່າວອີກນັຍນຶ່ງກໍ່ວ່າ ເພັ່ງຫຼືຫນ່ວງເອົາປກຖົມາຕູປຈິຕເປັນອາຣົມຕ໌ ໂດຍບໍຣິກັມມ໌ວ່າ **ວິຍ຺ຍານໍ ອນນ຺ຕໍ** ວິຍຍານຕ ບໍ່ມີທີ່ສິ້ນສຸດ ຈົນກວ່າຊານຈິຕຈະເກີດຂຶ້ນ ຊານຈິຕທີ່ເກີດຂຶ້ນໂດຍມາອາກາສານັນຈາຍຕນຈິຕເປັນອາຣົມຕ໌ນີ້ ຊື່ວ່າ ວິຍຍານັນຈາຍຕນຊານ ບາງເທື່ອກໍເອີ້ນວ່າ ທຸຕິຢາຕູປຈິຕ ຄື ທຸຕິຢອຣູປຈິຕ ເປັນອຣູປາວຈຂັ້ນທີ່ ໒

໓. ມີ **ນັຕຖິກາວບັນຍັຕິ** ເປັນອາຣົມຕ໌ ຄືສກາພທີ່ບໍ່ມີຫຍັງເລີຍເປັນອາຣົມຕ໌ ມີຄວາມຫມາຍວ່າ ເມື່ອໄດ້ຈເຣີນວິຍຍານັນຈາຍຕນຊານເລື້ອຍໆ ຈົນຊຳນານ ກໍຈະຮູ້ສຶກຂຶ້ນມາວ່າ ວິຍຍານຕ ຄືຕົວຮູ້ວ່າອາກາສບໍ່ມີທີ່ສິ້ນສຸດກໍດີ ແມ້ແຕ່ອາກາສທີ່ບໍ່ມີທີ່ສິ້ນສຸດນັ້ນເອງກໍດີ ຈະມີຫຍັງແມ້ແຕ່ຈັກຫນ່ອຍນຶ່ງກໍຫາບໍ່ໄດ້ ຈຶ່ງໄດ້ມາເພັ່ງເຖິງຄວາມບໍ່ມີ ໂດຍບໍຣິກັມມ໌ວ່າ **ນຕ຺ຖິ ກິຍ຺ຈິ** ນ້ອຍນຶ່ງກໍບໍ່ມີ ຫນ່ອຍນຶ່ງກໍບໍ່ມີຈົນກວ່າຊານຈະເກີດຂຶ້ນ ຊານຈິຕທີ່ເກີດຂຶ້ນໂດຍມີນັຕຖິກາວບັນຍັຕິເປັນອາຣົມຕ໌ນີ້ ຊື່ວ່າ ອາກິຍຈັນຍາຍຕນຊານ ບາງເທື່ອກໍເອີ້ນວ່າ ຕຕິຢາຣູປຈິຕ ຄື ຕຕິຢອຣູປຈິຕ ເປັນອຣູປາວຈຣຈິຕຂັ້ນທີ່ ໓

໔. ມີ **ອາກິຍຈັນຍາຍຕນຈິຕ** ເປັນອາຣົມຕ໌ ຄືຫນ່ວງເອົາຕຕິຢາຣູປຈິຕ ເປັນອາຣົມຕ໌ກຳຫນົດເອົາຄວາມປຕາຕີຕລະອຽດຂອງຕຕິຢຣູປຈິຕເປັນອາຣົມຕ໌ໂດຍຄວາມຮູ້ສຶກວ່າ ສັນຍາຄືຈິຕທີ່ຮູ້ຫນ່ອຍນຶ່ງກໍບໍ່ມີ ຫນ່ອຍນຶ່ງກໍບໍ່ມີນັ້ນຈະວ່າບໍ່ມີກໍບໍ່ແມ່ນ ເພາະຍັງມີຕົວຮູ້ວ່າບໍ່ມີຢູ່ ຈະວ່າມີກໍບໍ່ເຊີງ ເພາະສັນຍານັ້ນປຕາຕີຕລະອຽດອ່ອນແລະສງົບຫລາຍເຫລືອເກີນ ຈົນຊຫບຈະບໍ່ຮູ້ວ່າມີ ດັ່ງນັ້ນຈຶ່ງກຳຫນົດ ເພັ່ງລັນນຊາຕິທີ່ສງົບທີ່ປຕາຕີຕ ໂດຍບໍຣິກັມມ໌ວ່າ ເອຕໍ ສນ຺ຕໍ ເອຕໍ ປຕີຕໍ ສງົບນໍ ປຣະຕີຕນໍ ຈົນກວ່າຊານຈິຕຈະເກີດຂຶ້ນ ຊານຈິຕທີ່ເກີດຂຶ້ນໂດຍອາກິຍຈັນຍາຍຕນຈິຕເປັນອາຣົມຕ໌ເຊັ່ນນີ້ ຊື່ວ່າ ເນວສັນຍານາສັນຍາຍຕນຊານ ຊຶ່ງແປລວ່າຊານທີ່ບໍ່ມີ

ສັນຍາຫຍາບ ມີແຕ່ສັນຍາລະອຽດ ຫຼື ຊານທີ່ບໍ່ມີສັນຍາກໍບໍ່ແມ່ນ ຈະວ່າມີສັນຍາກໍບໍ່ເຊີງ ບາງເທື່ອເອີ້ນຊານນີ້ວ່າຈຕຸຕຖາຣູປຈິຕ ຄືຈຕຸຕຖອຣູປຈິຕເປັນອຣູປາວຈຣຈິຕຊັ້ນທີ່ ໔ ອັນເປັນຊັ້ນສູງສຸດພຽງນີ້

ອຣູປາວຈຣຈິຕ ອຣູປຈິຕ ອຣູປຊານ ຊຶ່ງມີ ໔ ຊັ້ນຫຼື ໔ ຊານນີ້ ແຕກຕ່າງກັນດ້ວຍປຣະເພທແຫ່ງອາຣົມຕ໌ດັ່ງທີ່ໄດ້ກ່າວມາທຳອິດນີ້ ບໍ່ແມ່ນຕ່າງກັນດ້ວຍອົງຄ໌ແຫ່ງຊານ ເພາະອົງຄ໌ຊານຂອງອຣູປຊານນີ້ ຄົງມີອົງຄ໌ຊານພຽງ ໒ ຄື ອຸເບກຂາ ກັບ ເອກັຄຄຕາ ເທົ່າກັນ ແລະເຫມືອນກັນທັງ ໔ ຊັ້ນ

ອີກຢ່າງ ອົງຄ໌ຊານຂອງອຣູປຊານນີ້ ກໍເທົ່າກັນແລະເຫມືອນກັນກັບອົງຄ໌ຊານຂອງຣູປາວຈຣປັນຈມຊານດ້ວຍ ດັ່ງນັ້ນຈຶ່ງຈັດວ່າຫຼືນັບວ່າ ອຣູປຊານເປັນປັນຈມຊານ ເພາະອົງຄ໌ຊານເທົ່າກັນແລະເຫມືອນກັນນັ່ນເອງ

ການຈຳແນກອຣູປຊານ ໔ ໂດຍຊາຕິ ຄື ອຣູປາວຈຣກຸສົລຈິຕ ອຣູປາວຈຣວິບາກຈິຕ ແລະ ອຣູປາວຈຣກິຣິຍາຈິຕ ກໍມີຢ່າງລະ ໔ ຄື

## ອຣູປາວຈຣກຸສົລຈິຕ

ອຣູປາວຈຣກຸສົລຈິຕ ເປັນຈິຕທີ່ບຳເພັນຈົນເຖິງອຣູປຊານ ເປັນຈິຕທີ່ຕົກແຕ່ງບຸນກຸສົລໄວ້ເພື່ອຮັບສົມບັຕິ ກໍມີຢ່າງລະ ໔ ຄື

໑. ອາກາສານັນຈາຍຕນກຸສົລຈິຕ

໒. ວິນຍານັນຈາຍຕນກຸສົລຈິຕ

໓. ອາກິນຈັນຍາຍຕນກຸສົລຈິຕ

໔. ເນວສັນຍານາສັນຍາຍຕນກຸສົລຈິຕ

## ອຣູປາວຈຣຈິຕວິບາກຈິຕ

ອຣູປາວຈຣວິບາກຈິຕ ເປັນຈິຕທີ່ເປັນຜົລຂອງອຣູປາວຈຣກຸສົລຈິຕ ເປັນຈິຕທີ່ສເວີຍສົມບັຕິຊຶ່ງອຣູປາວຈຣກຸສົລຈິຕໄດ້ຕົກແຕ່ງມາໃຫ້ ເປັນຈິຕຂອງອຣູປພຣົຫ໌ມໃນພຣົຫ໌ມໂລກ ມີຈຳນວນ ໔ ດວງ ອັນເປັນຈຳນວນທີ່ເທົ່າກັນກັບອຣູປາວຈຣກຸສົລຈິຕ ອຣູປາວຈຣວິບາກຈິຕ ໔ ດວງ ຄື

໑. ອາກາສານັນຈາຍຕນວິບາກຈິຕ

໒. ວິນຍານັນຈາຍຕນວິບາກຈິຕ

໓. ອາກິນຈັນຍາຍຕນວິບາກຈິຕ

໔. ເນວສັນຍານາສັນຍາຍຕນວິບາກຈິຕ

# ອຣູປາວຈຣກິຣິຍາຈິຕ

ອຣູປາວຈກິຣິຍາຈິຕ ເປັນຈິຕໂດຍສະເພາະຂອງພຣະອຣຫັນຕ໌ທີ່ເຂົ້າອຣູປຊານມີສຳນວນເກົ່າອະທິບາຍວ່າ ອຣູປາວຈຣກຸສົລກັບອຣູປາວຈຣກິຣິຍານັ້ນເຫມືອນກັນຕ່າງແຕ່ທີ່ເກີດ ອຣູປາວຈຣກຸສົລເກີດໃນສັນດານປຸຖຸຊົນ ແລະເສກຂບຸຄຄົລ ສ່ວນອຣູປາວຈຣກິຣິຍາເກີດໃນສັນດານ ອເສກຂບຸຄຄົລ (ຄື ພຣະອຣຫັນຕ໌) ອຣູປາວຈຣກິຣິຍາຈິຕ ມີຈຳນວນ ໔ ດວງ ຄື

໑. ອາກາສານັญຈາຍຕນກິຣິຍາຈິຕ

໒. ວິญญາณັญຈາຍຕນກິຣິຍາຈິຕ

໓. ອາກິญຈັญญາຍຕນກິຣິຍາຈິຕ

໔. ເນວສັญญານາສັญญາຍຕນກິຣິຍາຈິຕ

ຂໍຢ້ຳອີກເທື່ອນຶ່ງວ່າ ຣູປາວຈຣຈິຕນັ້ນ ອາຣົມຕ໌ອາຈຈະເຫມືອນກັນ ແຕ່ແຕກຕ່າງກັນທີ່ອົງຄ໌ຊານ ກ່າວຄື ອົງຄ໌ຊານບໍ່ເທົ່າກັນ ສ່ວນອຣູປາວຈຣຈິຕນັ້ນ ອົງຄ໌ຊານເທົ່າກັນ ແລະເຫມືອນກັນ ແຕ່ແຕກຕ່າງກັນທີ່ອາຣົມຕ໌ບໍ່ເຫມືອນກັນ

# ມຫັຄຄຕຈິຕ

ໃນ ອັກສາລິນີອັຖກຖາ ສແດງວ່າ **ມຫນຸຕພາວໍ ຄຕາຕິ ມຫຄຸຄຕາ** ແປລເປັນໃຈຄວາມວ່າ ລັມມຊາຕິທີ່ເຖິງຊຶ່ງຄວາມເປັນໃຫລ່ນັ້ນ ເອີ້ນວ່າ **ມຫັຄຄຕະ**

ທີ່ວ່າ ເຖິງຊຶ່ງຄວາມເປັນໃຫລ່ ນັ້ນ ມີອັຖາທິບາຍວ່າ

ກ. ຂົ່ມກິເລສໄວ້ໄດ້ນານ ຊນິດທີ່ເອີ້ນວ່າ ວິກຂັມກນປຫານ

ຂ. ມີຜົລອັນໄພບູລຍ໌ ຄືມີພຣົຫ໌ມວິຫາຣລັມມ໌ ໄດ້ສເວີຍສົມບັຕິໃນພຣົຫ໌ມໂລກ

ຄ. ເກີດຂຶ້ນສືບຕໍ່ກັນໄດ້ເປັນເວລານານ ເປັນຣູປພຣົຫ໌ມ ອຣູປພຣົຫ໌ມທີ່ອາຍຸຍືນຍາວກວ່າສັຕວ໌ອື່ນທັ້ງຫລາຍ

ຈິຕທີ່ປຣະກອບດ້ວຍມຫັຄຄຕລັມມ໌ນີ້ເອີ້ນວ່າ ມຫັຄຄຕຈິຕ ມີ ໒໗ ດວງ ຄື ຣູປາວຈຣຈິຕ ໑໕ ແລະ ອຣູປາວຈຣຈິຕ ໑໒ ຈຳແນກມຫັຄຄຕຈິຕໂດຍຊາຕິເພທເປັນຕົ້ນ

໑. **ຊາຕິເພທ**

- ☞ ມຫັຄຄຕກຸສົລຈິຕ ໙ ດວງ ເປັນຊາຕິກຸສົລ
- ☞ ມຫັຄຄຕວິບາກຈິຕ ໙ ດວງ ເປັນຊາຕິວິບາກ
- ☞ ມຫັຄຄຕກິຣິຍາຈິຕ ໙ ດວງ ເປັນຊາຕິກິຣິຍາ

໒. **ກູມິເພທ** ມຫັຄຄຕຈິຕ ໒໗ ດວງນັ້ນ ຣູປາວຈຣຈິຕ ໑໕ ດວງ ເປັນຣູປາວຈຣກູມິ ຄືເປັນຈິຕຊັ້ນຣູປາວຈຣ ອຣູປາວຈຣຈິຕ ໑໒ ດວງ ເປັນອຣູປາວຈຣກູມິ ຄືເປັນຈິຕຊັ້ນອຣູປາວຈຣ

໓. **ເວທນາເພທ** ມຫັຄຄຕຈິຕ ໒໗ ດວງ ມີເວທນາ ໒ ຢ່າງ ຄື ຣູປາວຈຣປຖົມຊານ ໓ ດວງ ຣູປາວຈຣທຸຕິຢຊານ ໓ ດວງ ຣູປາວຈຣຕຕິຢຊານ ໓ ດວງ ຣູປາວຣຈຕຸຕຖຊານ ໓ ດວງ ຣວມຣູປາວຈຣຈິຕ ໑໒ ດວງນີ້ ເປັນໂສມນັສເວທນາ ຣູປາວຈຣປັຈຈມຊານ ໓ ດວງ ອຣູປາວຈຣຈິຕ ໑໒ ດວງ ຣວມຈິຕ ໑໕ ດວງນີ້ເປັນອຸເບກຂາເວທນາ

໔. **ເຫຕຸເພທ** ມຫັຄຄຕຈິຕທັ້ງ ໒໗ ດວງ ເປັນສເຫຕຸກຈິຕ ເປັນຈິຕທີ່ມີສັມປຢຸຕຕເຫຕຸ ມີເຫຕຸປຣະກອບທັ້ງ ໓ ເຫຕຸ ຄື *ອໂລກເຫຕຸ ອໂທສເຫຕຸ ອໂມຫເຫຕຸ*

໕. **ສັງຂາຣເພທ** ມຫັຄຄຕຈິຕ ໒໗ ດວງ ເປັນສສັງຂາຣິກ ເປັນຈິຕທີ່ເກີດຂຶ້ນໂດຍສິ່ງຊັກຈູງ ກ່າວຄື ຕ້ອງຈເຣີນສມຖກາວນາດ້ວຍມຫາກຸສົລຍາຕສັມປຢຸຕຕຈິຕ ຊານຈິຕຈຶ່ງຈະເກີດ ຈຶ່ງຖືວ່າມຫາກຸສົລຍາຕສັມປຢຸຕຕຈິຕນັ້ນແຫລະ ເປັນສິ່ງຊັກຈູງໃຫ້ເກີດກຸສົລຊານຈິຕ ກຸສົລຊານຈິຕ ຊຶ່ງເກີດຂຶ້ນໃນມຕຕາສັນນວິຖີ ຄືວິຖີຈິຕທີ່ຈະຕາຍ ເປັນສິ່ງຊັກຈູງໃຫ້ເກີດວິບາກຊານຈິຕ ມຫາກິຣິຍາຍາຕສັມປຢຸຕຕ ເປັນສິ່ງທີ່ຊັກຈູງໃຫ້ກິຣິຍາຊານຈິຕເກີດ ທຳນອງດຽວກັບມຫາກຸສົລຍາຕສັມປຢຸຕຕຊັກຈູງໃຫ້ເກີດກຸສົລຊານຈິຕ

໖. **ສັມປຢຸຕຕເພທ** ມຫັຄຄຕຈິຕທັ້ງ ໒໗ ດວງ ເປັນຍາຕສັມປຢຸຕຕ ເປັນຈິຕທີ່ປຣະກອບດ້ວຍປັນຍາ

໗. **ໂສກຕເພທ** ມຫັຄຄຕຈິຕທັ້ງ ໒໗ ດວງ ເປັນໂສກຕຈິຕ

໘. **ໂລກເພທ** ມຫັຄຄຕຈິຕທັ້ງ ໒໗ ດວງ ກໍຍັງເປັນໂລກິຍຈິຕ ຫາແມ່ນໂລກຸຕຕຈິຕບໍ່

໙. **ຊານເພທ** ມຫັຄຄຕຈິຕທັ້ງ ໒໗ ດວງ ເປັນຊານຈິຕ ເປັນຈິຕທີ່ເປັນຊານທີ່ໄດ້ຊານທີ່ເຖິງຊານ

# ໂລກຸຕຕຈິຕ

**ໂລກຸຕຕຈິຕ** ມາຈາກຄຳວ່າ **ໂລກ + ອຸຕຕຣ + ຈິຕ**

**ໂລກ** ຫມາຍເຖິງໂລກທັ້ງ ໓ ຄື **ກາມໂລກ** (ກາມພູມິ) **ຣູປໂລກ** (ຣູປພູມິ) ແລະ **ອຣູປໂລກ** (ອຣູປພູມິ) ກໍໄດ້ ອີກນັຍນຶ່ງ ຄຳວ່າ **ໂລກ** ຫມາຍເຖິງ "**ການເກີດດັບ**" ກໍໄດ້

**ອຸຕຕຣ** ມີຄວາມຫມາຍວ່າ **ເຫນືອ** ຫຼື **ພົ້ນ**

ດັ່ງນັ້ນໂລກຸຕຕຈິຕຈຶ່ງເປັນຈິຕທີ່ເຫນືອໂລກທັ້ງ ໓ ເປັນຈິຕທີ່ພົ້ນຈາກໂລກທັ້ງ ໓ ຊຶ່ງບໍ່ໄດ້ຫມາຍຄວາມວ່າ ຈິຕນີ້ຢູ່ເຫນືອໂລກຫຼື ຈິຕນີ້ພົ້ນໄປຈາກໂລກ ແຕ່ຫມາຍຄວາມວ່າຈິຕນີ້ມີອາຣົມຕ໌ທີ່ເຫນືອໂລກມີອາຣົມຕ໌ພົ້ນໄປຈາກໂລກ ຄືໂລກຸຕຕຈິຕນີ້ມີນິພພານເປັນອາຣົມຕ໌ ຊຶ່ງນິພພານເປັນທັມມ໌ທີ່ພົ້ນຈາກໂລກເປັນທັມມ໌ທີ່ເຫນືອໂລກ

ໂລກຸຕຕຈິຕເປັນຈິຕທີ່ພົ້ນຈາກການເກີດດັບ ຊຶ່ງບໍ່ໄດ້ຫມາຍຄວາມວ່າຈິຕນີ້ບໍ່ໄດ້ເກີດດັບ ຈິຕນີ້ກໍຍັງເກີດດັບຕາມສພາພຂອງຈິຕ ແຕ່ເປັນຈິຕທີ່ມີອາຣົມຕ໌ອັນພົ້ນຈາກການເກີດດັບ ອາຣົມຕ໌ນັ້ນຄືນິພພານ ຊຶ່ງນິພພານເປັນທັມມ໌ທີ່ບໍ່ມີການເກີດດັບ ທັມມ໌ທັ້ງຫລາຍໃນ

ໂລກທັງ ໓ ຍ່ອມເກີດດັບທັງຫມົດ ແຕ່ນິພພານເປັນທັມທີ່ບໍ່ເກີດດັບເປັນທັມທີ່ພົ້ນຈາກການເກີດດັບ ນິພພານຈຶ່ງເປັນທັມທີ່ພົ້ນຈາກໂລກ ເປັນທັມທີ່ເຫນືອໂລກ

ອີກນັຍນຶ່ງ ໂລກຸຕຕຈິຕມີຄວາມຫມາຍວ່າເປັນຈິຕທີ່ກຳລັງປຣະຫານແລະປຣະຫານແລ້ວຊຶ່ງກິເລສ ຫມາຍຄວາມວ່າ ໂລກຸຕຕຈິຕຫຼື ມັຄຄຈິຕນັ້ນກຳລັງທຳການປຣະຫານກິເລສຢູ່ ໂລກຸຕຕຣວິບາກຈິຕຫຼືຜົລຈິຕ ເປັນຈິຕທີ່ສເວີຍຜົລທີ່ມັຄຄຈິຕໄດ້ປຣະຫານກິເລສນັ້ນແລ້ວ ເປັນການປຣະຫານໄດ້ຢ່າງເດັດຂາດ ອັນທຳໃຫ້ກິເລສນັ້ນໆ ຫມົດສິ້ນສູນເຊື້ອໄປໂດຍສິ້ນເຊີງ ຈົນບໍ່ສາມາຖທີ່ຈະເກີດມາກໍ່ຄວາມເສົ້າຫມອງ ຮ້ອນຮົນອີກຕໍ່ໄປໄດ້ເລີຍ ການປຣະຫານເຊັ່ນນີ້ແຫລະທີ່ເອີ້ນວ່າສມຸຈເຊທປຫານ

ມີຄາຖາສັງຄະຫະ ເປັນຄາຖາທີ່ ໑໐ ສແດງຈຳນວນລະປຣະເພທຂອງໂລກຸຕຕຈິຕໄວ້ດັ່ງນີ້

໑໐. ຈຕຸມຄ຺ຄປ຺ປເພທຳ ຈຕຸລາ ກຸສລນ຺ຕຖາ
ປາກນ຺ຕສ຺ສ ຜລຕ຺ຕາຕິ ອຕ຺ຖາ ນຸຕ຺ຕຣໍ ມຕໍ ໆ

ແປລຄວາມວ່າ ສົມເດັຈພຣະສັມມາສັມພຸທຣເຈົ້າ ຕຣັສວ່າ ໂລກຸຕຕຣອັນປຣະເສີຖຍິ່ງນັ້ນມີ ໘ ຄື ໂລກຸຕຕຣກຸສົລຈິຕ ຊຶ່ງເປັນປຣະເພທ ອຣິຍມັຄຄ ໔ ແລະ ໂລກຸຕຕຣວິບາກ ຊຶ່ງເປັນຜົລຂອງໂລກຸຕຕຣກຸສົລຈິຕ ອີກ ໔

ອະທິບາຍວ່າ ໂລກຸຕຕຈິຕນັ້ນມີ ໒ ຊາຕິ ຄື

**ຊາຕິກຸສົລ** ເອີ້ນວ່າ ໂລກຸຕຕຣກຸສົລຈິຕ ຊຶ່ງເປັນປຣະເພທອຣິຍມັຄຄ ຈຶ່ງມີຊື່ເອີ້ນອີກຊື່ນຶ່ງວ່າ ມັຄຄຈິຕ ມີຈຳນວນ ໔ ດວງ

**ຊາຕິວິບາກ** ເອີ້ນວ່າ ໂລກຸຕຕຣວິບາກຈິຕ ອັນເປັນຜົລຂອງໂລກຸຕຕຣກຸສົລຈິຕຈຶ່ງມີຊື່ເອີ້ນອີກຊື່ນຶ່ງວ່າ ຜົລຈິຕ ມີຈຳນວນ ໔ ດວງເຫມືອນກັນ ຈຶ່ງຮວມເປັນ ໂລກຸຕຕຈິຕ ໘ ດວງ

ຈຳງ່າຍໆ ສັ້ນໆ ວ່າ **ມັຄຄ** ຄື "ກຸສົລ" **ຜົລ** ຄື "ວິບາກ" ຊຶ່ງຫມາຍຄວາມວ່າ ມັຄຄຈິຕນັ້ນເປັນຊາຕິກຸສົລ ຜົລຈິຕນັ້ນເປັນຊາຕິວິບາກ

ມີຂໍ້ຄວຣສັງເກຕຢູ່ວ່າ ໂລກຸຕຕຈິຕນີ້ມີແຕ່ໂລກຸຕຕຣກຸສົລແລະໂລກຸຕຕຣວິບາກ ບໍ່ມີໂລກຸຕຕຣກິຣິຍາດ້ວຍເລີຍ ທີ່ໂລກຸຕຕຈິຕບໍ່ມີໂລກຸຕຕຣກິຣິຍານັ້ນ ເພາະ ໂລກຸຕຕຣກິຣິຍາຖ້າມີກໍ່ຄືມີໂລກຸຕຕຣກຸສົລອັນເກີດໃນສັນດານພຣະອຣຫັນຕ໌ທ່ານອງດຽວກັບມຫາກິຣິຍາ ແລະມຫັຄຄຕກິຣິຍາກໍ່ຄື ມຫາກຸສົລແລະມຫັຄຄຕກຸສົລ ອັນເກີດໃນສັນດານພຣະອຣຫັນຕ໌ນັ້ນເອງ

ອັນວ່າ ມຫາກຸສົລ ຫຼື ມຫັຄຄຕກຸສົລນັ້ນ ສາມາຖເກີດໄດ້ເລື້ອຍໆ ເກີດໄດ້ເນືອງໆ ດັ່ງນັ້ນຈຶ່ງເກີດໃນສັນດານພຣະອຣຫັນຕ໌ໄດ້ສເມີ ເມື່ອເກີດຂຶ້ນກໍ່ເປັນມຫາກິຣິຍາຫຼືມຫັຄຄຕກິຣິຍາໄປ ບໍ່ເຫມືອນກັບມັຄຄຈິຕຊຶ່ງ ເກີດໄດ້ພຽງມັຄຄລະເທື່ອດຽວ ຄື ໂສດາປັຕຕິມັຄຄກໍ່ເກີດໄດ້ເທື່ອດຽວ ສກທາຄາມິມັຄຄ ອນາຄາມິມັຄຄ ຕລອດຈົນອຣຫັຕຕມັຄຄ ກໍ່ເກີດໄດ້ມັຄຄລະເທື່ອດຽວ ເທົ່ານັ້ນ ເພາະມັຄຄຈິຕນັ້ນເກີດຂຶ້ນ ເພື່ອປຣະຫານກິເລສແລະປຣະຫານເປັນສມຸຈເຊທເສັຽດ້ວຍ ເມື່ອໄດ້ເປັນພຣະອຣຫັນຕ໌ຊຶ່ງໄດ້ປຣະຫານກິເລສຈົນຫມົດຈົດສິ້ນເຊີງ ບໍ່ມີກິເລສເຫລືອເລີຍແມ້ແຕ່ນ້ອຍແລ້ວ ກໍບໍ່ຕ້ອງມີມັຄຄຈິຕເກີດຂຶ້ນມາປຣະຫານຫຍັງອີກ ດັ່ງນີ້ຈຶ່ງບໍ່ມີໂລກຸຕຕຣກິຣິຍາຈິຕ

# ການປະຫານກິເລສ

ກິເລສ ຄື ທັມມ໌ທີ່ເສົ້າຫມອງແລະຮ້ອນຮົນ ເມື່ອກິເລສເກີດພ້ອມກັບຈິດໃດຫຼືປະກອບກັບຈິດໃດແລ້ວ ກໍທຳໃຫ້ຈິດນັ້ນເສົ້າຫມອງແລະຮ້ອນຮົນໄປດ້ວຍ ກິເລສນີ້ປະກອບສະເພາະອະກຸສົລຈິດເທົ່ານັ້ນ ດັ່ງນັ້ນການປະຫານກິເລສກໍເທົ່າກັບປະຫານອະກຸສົລຈິດນັ່ນເອງ

ໃນພຣະອະພິທັມມັດຖະສັງຄະຫະປະຣິເຈທທີ່ ໗ ຈຳແນກກິເລສອອກເປັນເຖິງ ໙ ກອງ ໂດຍນັຍຕ່າງ ໆ ກັນ ຈະກ່າວໃນທີ່ນັ້ນກໍຈະສັບສົນໄປ ໃນຂັ້ນນີ້ຫາກໍຮູ້ແຕ່ພຽງວ່າກິເລສນີ້ແບ່ງເປັນ ໓ ຊັ້ນ ຄື:

ກ. **ວີຕິກກມກິເລສ** ໄດ້ແກ່ກິເລສທີ່ເກີດຂຶ້ນຊັ້ນນອກ ຫມາຍຄວາມວ່າກິເລສຈຳພວກນີ້ໄດ້ລ່ວງອອກມາແລ້ວເຖິງກາຍທວານຫຼືວະຈີທວານ ຄືເຖິງກັບລົງມືກະທຳການທຸຈຣິຕທາງກາຍຫຼືທາງວາຈາແລ້ວ ກິເລສຊະນິດນີ້ຣະງັບໄວ້ໄດ້ດ້ວຍສີລ ເປັນການຣະງັບໄວ້ໄດ້ຊົ່ວຄາວຊົ່ວຂະຕະ ທີ່ຍັງຮັກສາສີລຢູ່ ການຣະງັບ ການຂົ່ມ ຫຼືການປະຫານເຊັ່ນນີ້ເອີ້ນວ່າ ຕທັງຄປຫານ ຫມາຍຄວາມວ່າຂະຕະໃດທີ່ຈິດເປັນມຫາກຸສົລຢູ່ ກິເລສເຫລົ່ານີ້ກໍສງົບຣະງັບໄປຊົ່ວຄາວຊົ່ວຂະຕະ ບໍ່ສາມາຖປະກອບກັບຈິດກໍ່ໃຫ້ເກີດກາຍທຸຈຣິຕຫຼືວະຈີທຸຈຣິຕໄດ້ໃນຊົ່ວຂະຕະນັ້ນ

ຂ. **ປຣິຢຸຜຖານກິເລສ** ໄດ້ແກ່ກິເລສທີ່ຢູ່ກາຍໃນ ຫມາຍຄວາມວ່າກິເລສຈຳພວກນີ້ເກີດຢູ່ໃນມະໂນທວານ ຄືຄິດຢູ່ໃນໃຈເທົ່ານັ້ນ ບໍ່ເຖິງກັບສແດງອອກທາງກາຍຫຼືທາງວາຈາ ຕົວເອງຮູ້ໄດ້ ຜູ້ອື່ນບາງເທື່ອກໍຮູ້ບາງເທື່ອກໍບໍ່ຮູ້ ກິເລສຊະນິດນີ້ຂົ່ມໄວ້ໄດ້ດ້ວຍສມາຣິ ຄື ຊານ ຂົ່ມໄວ້ຫຼືຣະງັບໄວ້ໄດ້ເປັນເວລານານ ເອີ້ນວ່າ ວິກຂັມກນປຫານ ຂົ່ມໄວ້ໄດ້ນານຕຣາບເທົ່າທີ່ຊານຍັງບໍ່ເສື່ອມ

ຄ. **ອນຸສຢກິເລສ** ໄດ້ແກ່ກິເລສທີ່ນອນເນື່ອງຢູ່ໃນຈິຕສັນດານ ຊຶ່ງຕົນເອງແລະຜູ້ອື່ນກໍບໍ່ສາມາຖຮູ້ໄດ້ ກິເລສຈຳພວກນີ້ຕ້ອງປະຫານ ດ້ວຍປັນຍາ ອັນຫມາຍເຖິງມັຄຄຈິຕ ຊຶ່ງມັຄຄຈິຕສາມາຖປະຫານໄດ້ຈົນຫມົດສິ້ນສູນເຊື້ອໂດຍສິ້ນເຊີງທີ່ເອີ້ນວ່າ **ສມຸຈເຉທປຫານ**

ສຣຸປໄດ້ວ່າ

| | | |
|---|---|---|
| ວີຕິກກມກິເລສ | ປະຫານດ້ວຍມຫາກຸສົລຈິຕ | ເປັນຕທັງຄປຫານ |
| ປຣິຢຸຜຖສນກິເລສ | ປະຫານດ້ວຍມຫັຄຄຕກຸສົລຈິຕ | ເປັນວິກຂັມກນປຫານ |
| ອນຸສຢກິເລສ | ປະຫານດ້ວຍມັຄຄຈິຕ | ເປັນສມຸຈເຉທປຫານ |

# ໂລກຸຕຕຣກຸສົລຈິຕ ຫຼື ມັຄຄຈິຕ

**ໂລກຸຕຕຣກຸສົລຈິຕ** ຫຼື ອີກນັຍນຶ່ງເອີ້ນວ່າ **ມັຄຄຈິຕ** ເປັນຈິຕທີ່ກຳລັງພົ້ນຈາກໂລກ ເປັນຈິຕທີ່ກຳລັງປະຫານກິເລສມີຈຳນວນ ໔ ດວງ ຄື:

໑. ໂສດາປັຕຕິມັຄຄຈິຕ

໒. ສກທາຄາມິມັຄຄຈິຕ

໓. ອນາຄາມິມັຄຄຈິຕ

໔. ອຣຫັນຕມັຄຄຈິຕ

# ໂລກຸຕຕຣວິບາກຈິຕ ຫຼື ຜົລຈິຕ

**ໂລກຸຕຕຣວິບາກຈິຕ** ຫຼື ອີກນັຍນຶ່ງເອີ້ນວ່າ **ຜົລຈິຕ** ເປັນຈິຕທີ່ເປັນຜົລແຫ່ງໂລກຸຕຕຣກຸສົລຈິຕ ເປັນຈິຕທີ່ພົ້ນແລ້ວຈາກໂລກ ເປັນຈິຕທີ່ໄດ້ປຣະຫານແລ້ວຊຶ່ງກິເລສເປັນສມຸຈເຈທປຫານ

ເມື່ອມັຄຄຈິຕເກີດຂຶ້ນແລະດັບແລ້ວ ຜົລຈິຕກໍຈະເກີດຕິດຕໍ່ກັນໃນທັນທີທັນໃດນັ້ນເອງ ໂດຍບໍ່ມີຣະຫວ່າງຄັ່ນ ຄືບໍ່ມີຈິຕໃດມາຄັ່ນເລີຍ ດັ່ງນັ້ນຈຶ່ງເອີ້ນມັຄຄຈິຕວ່າ ອກາລິໂກ ເພາະເປັນເຫຕຸໃຫ້ຜົລຈິຕເກີດຂຶ້ນໃນປັຈຈຸບັນທັນທີ ບໍ່ຕ້ອງຖ້າກາລຖ້າເວລາເລີຍ

ຜົລຈິຕມີຈຳນວນ ໔ ດວງ ຄື:

໑. ໂສດາປັຕຕິຜົລຈິຕ

໒. ສກທາຄາມິຜົລຈິຕ

໓. ອນາຄາມິຜົລຈິຕ

໔. ອຣຫັຕຕຜົລຈິຕ

# ໂສດາປັຕຕິມັຄຄຈິຕ ຄູ່ກັບ ໂສດາປັຕຕິຜົລຈິຕ

**ໂສດາປັຕຕິມັຄຄຈິຕ** ມາຈາກຄຳວ່າ **ໂສຕ** (ກຣະແສ ຄື ໄຫລ) + **ອາປັຕຕິ** (ເຖິງເທື່ອທຳອິດ) + **ມັຄຄ** (ທາງ) + **ຈິຕ** ຣວມແປລຄວາມວ່າ ***"ຈິຕທີ່ເຖິງເທື່ອທຳອິດຊຶ່ງທາງອັນເປັນກຣະແສແຫ່ງພຣະນິພພານ"*** ຫມາຍຄວາມວ່າຕົກກຣະແສທີ່ໄຫລໄປສູ່ພຣະນິພພານເຫມືອນດັ່ງກຣະແສ ນ້ຳໄຫລສູ່ມຫາສມຸທຣ

**ວຈນຕຸຖ** ຄື ເນື້ອຄວາມຂອງຄຳ ຫມາຍເຖິງຄຳຈຳກັດຄວາມ ຫຼື ຄວາມຫມາຍຂອງຄຳນັ້ນ ວຈັນຕຕຖະຂອງໂສດາປັຕຕິມັຄຄຈິຕມີວ່າ:

໑. **ອຣິຍມຄຸຄໂສຕສ຺ ສ ອາທິໂຕ ປຊຊນໍ ເອຕສ຺ ສາຕິ ໂສຕາປຕຸຕິ ฯ** ການເຖິງກຣະແສອຣິຍມັຄຄອັນໄຫລ ໄປສູ່ພຣະນິພພານເທື່ອທຳອິດ ຂອງບຸຄຄົລນັ້ນມີຢູ່ ດັ່ງນັ້ນຊື່ວ່າ ໂສຕາປັຕຕິ

໒. **ຕສ຺ສ ມຄຸໂຄ ໂສຕາປຕຸຕິມຄຸໂຄ ฯ** ມັຄຄແຫ່ງບຸຄຄົລຜູ້ເຖິງກຣະແສອຣິຍມັຄຄ ອັນໄຫລ ໄປສູ່ພຣະນິພພານເທື່ອທຳອິດຊື່ ໂສຕາປັຕຕິມັຄຄ

໓. **ເຕນ ສມ຺ປຍຸຕຸຕໍ ຈິຕຸຕໍ ໂສຕາປຕຸຕິມຄຸຄຈິຕຸຕໍ ฯ** ຈິຕທີ່ສັມປຍຸຕຕດ້ວຍໂສດາປັຕຕິມັຄຄນັ້ນ ຊື່ວ່າ **ໂສດາປັຕຕິມັຄຄຈິຕ**

☞ **ໂສດາປັຕຕິມັຄຄຈິຕ** ເກີດຂຶ້ນແກ່ບຸຄຄົລໃດ ບຸຄຄົລນັ້ນໄດ້ຊື່ວ່າ **ໂສດາປັຕຕິມັຄຄບຸຄຄົລ**

☞ **ໂສດາປັດຕິຜົລຈິຕ** ເກີດຂຶ້ນແກ່ບຸຄຄົລໃດ ບຸຄຄົລນັ້ນໄດ້ຊື່ວ່າ **ໂສດາປັດຕິຜົລຈິຕ**

☞ ໂສດາປັດຕິຜົລບຸຄຄົລນີ້ແຫລະເອີ້ນວ່າ **ພຣະໂສດາບັນ** ໄດ້ຊື່ວ່າ **ເສກຂບຸຄຄົລເປັນບຸຄຄົລ** ທີ່ຈະຕ້ອງສຶກສາກັນອີກຕໍ່ໄປ ຫມາຍຄວາມວ່າຈະຕ້ອງປະຕິບັຕິຕໍ່ໄປຈົນກວ່າຈະເປັນພຣະອຣຫັນຕ໌ ຈຶ່ງຈະບໍ່ຕ້ອງສຶກສາຕໍ່ໄປອີກແລ້ວ ຈຶ່ງໄດ້ ຊື່ວ່າ **ອເສກຂບຸຄຄົລ**

☞ **ໂສດາປັດຕິມັຄຄຈິຕ** ເປັນຈິຕທີ່ພົ້ນຈາກການໂລກຈະເພາະສ່ວນທີ່ເປັນອບາຍພູມິ ຄື **ນຣົກ ເປຕ ອສຸຣກາຍ** ແລະ **ດີຣັຈສານ**

☞ **ໂສດາປັດຕິຜົລຈິຕ** ເປັນຈິຕທີ່ພົ້ນແລ້ວຈາກອບາຍພູມິໂດຍເດັດຂາດ ຫມາຍຄວາມວ່າ ***ພຣະໂສດາບັນເມື່ອຈຸຕິແລ້ວຈະບໍ່ປະຕິສົນທິໃນອບາຍພູມິອີກເລີຍ*** ເພາະປຣະຫານຈິຕຊື່ອຈິຕບາປທີ່ເປັນເຫຕຸໃຫ້ຕ້ອງເກີດໃນອບາຍໄດ້ແລ້ວ

☞ ໂສດາປັດຕິມັຄຄຈິຕ ***ເປັນຈິຕທີ່ປຣະຫານກິເລສ*** ໄດ້ກ່າວມາແລ້ວວ່າ ກິເລສເປັນຕົວການທີ່ມາປຣະກອບແລະກໍ່ໃຫ້ເກີດອກຸສົລຈິຕ ດັ່ງນັ້ນໃນທີ່ນີ້ຈະໄດ້ກ່າວເຖິງອກຸສົລຈິຕທີ່ຖືກປຣະຫານນັ້ນເລີຍທີດຽວ ຄືໂສດາປັດຕິມັຄຄຈິຕກຳລັງປຣະຫານຈິຕໂລກທີ່ເປັນ ***ທິຍຖິສັມປຍຸຕຕ ໔ ດວງ*** ແລະໂມຫມູລຈິຕທີ່ເປັນ ***ວິຈິກິຈສາສັມປຍຸຕຕ ໑ ດວງ*** ຣວມກຳລັງປຣະຫານອກຸສົລຈິຕ ໕ ດວງ

☞ **ໂສດາປັດຕິຜົລຈິຕ** ເປັນຈິຕທີ່ປຣະຫານແລ້ວຊຶ່ງ***ອກຸສົລຈິຕ ໕ ດວງ*** ນັ້ນໄດ້ໂດຍເດັດຂາດເປັນສມຸຈເຈທປຫານ

ກ່າວໂດຍອກຸສົລກັມມບົຖ ໑໐ ປຣະການ ໂສດາປັດຕິມັຄຄຈິຕ ເປັນຈິຕທີ່ກຳລັງປຣະຫານອກຸສົລກັມມບົຖ ໕ ປຣະການ ຄື **ປາຕາຕິບາຕ ໑, ອທິນນາທານ ໑, ກາເມສຸມິຈສາຈາຕ ໑, ມຸສາວາທ ໑** ແລະ **ມິຈສາທິຍຖິ ໑**

ໂສດາປັດຕິຜົລຈິຕ ເປັນຈິຕທີ່ປຣະຫານແລ້ວຊຶ່ງອກຸສົລກັມມບົຖ ໕ ປຣະການນັ້ນໄດ້ໂດຍເດັດຂາດເປັນສມຸຈເຈທປຫານ ພຣະພຸທສອົງຄ໌ຊົງເທສນາໄວ້ໂດຍຕຣົງວ່າ ພຣະໂສດາບັນນັ້ນຈຳແນກໄດ້ເປັນ ໓ ຈຳພວກ ຄື:

໑. **ເອກພີຊີໂສດາບັນ** ເປັນພຣະໂສດາບັນທີ່ມີພືຊກຳເນີດອີກພຽງນຶ່ງຫມາຍຄວາມວ່າ ພຣະໂສດາບັນຜູ້ນັ້ນຈະຕ້ອງປະຕິສົນທິເປັນມນຸຍ໌ ຫຼື ເທວດາອີກຊາຕິດຽວກໍບັຣລຸອຣຫັຕຕຜົລ

໒. **ໂກລັງໂກລໂສດາບັນ** ຄືພຣະໂສດາບັນຜູ້ຕ້ອງປະຕິສົນທິເປັນມນຸຍ໌ ຫຼື ເທວດາອີກໃນຣະຫວ່າງ ໒ ເຖິງ ໖ ຊາຕິ ຈຶ່ງຈະບັຣລຸອຣຫັຕຕຜົລ

໓. **ສັຕຕັກຂັຕຕຸປຣມໂສດາບັນ** ຄືພຣະໂສດາບັນຜູ້ຕ້ອງປະຕິສົນທິອີກເຖິງ ໗ ຊາຕິ ຈຶ່ງຈະບັຣລຸອຣຫັຕຕຜົລ

ທີ່ແຕກຕ່າງກັນເຊັ່ນນີ້ ເປັນເພາະອິນທຣີຍ໌ແກ່ກລ້າຍິ່ງຫຍ່ອນກວ່າກັນ ຈຶ່ງທຳໃຫ້ຄວາມມຸ່ງມັ່ນໃນການບັຣລຸອຣຫັຕຕມັຄຄອຣຫັຕຕຜົລນັ້ນຊ້ານານກວ່າກັນໄປດ້ວຍ ແຕ່ແນວໃດກໍດີ ພຣະໂສດາບັນກໍບໍ່ຕ້ອງປະຕິສົນທິໃນຊາຕິທີ່ ໘ ເພາະແມ້ຈະເປັນຜູ້ເພລີດເພລີນມີຄວາມປຣະມາທຢູ່ແດ່ ກໍຕ້ອງບັຣລຸອຣຫັຕຕຜົລໃນຊາຕິທີ່ ໗ ແນ່ນອນ

# ສະກະທາຄາມິມັຄຄະຈິດ ຄູ່ກັບ ສະກະທາຄາມິຜົລຈິດ

**ສະກະທາຄາມິມັຄຄະຈິດ** ມາຈາກຄຳວ່າ **ສະກິ** (ເທື່ອດຽວ) + **ອະນາຄາມິ** (ກັບມາ) + **ມັຄຄະ** (ທາງ) + **ຈິດ** ຮວມແປລຄວາມວ່າ ***"ຈິດທີ່ເຖິງຊຶ່ງທາງທີ່ຈະກັບມາອີກເທື່ອດຽວ"*** ມີຄວາມໝາຍວ່າ ເປັນຜູ້ທີ່ຈະກັບມາປະຕິສົນທິໃນການພູມິອີກເທື່ອດຽວເທົ່ານັ້ນ

**ວຈນັດຖະ** ຂອງ ສະກະທາຄາມິມັຄຄະຈິດ ມີວ່າ:

໑. **ສກິ ເອກວາຣໍ ປຏິສນ຺ທິວເສນ ອິມໍ ມນຸສ຺ສໂລກໍ ອາຄຈ຺ຉຕີຕິ ສກທາຄາມີ ໆ** ພຣະອະຣິຍະບຸຄຄົລທີ່ກັບມາສູ່ມະນຸດໂລກນີ້ດ້ວຍອຳນາຈ ປະຕິສົນທິເທື່ອດຽວຊື່ວ່າ **ສະກະທາຄາມີ**

໒. **ຕສ຺ສ ມຄ຺ໂຄ ສກທາຄາມິມຄ຺ໂຄ ໆ** ມັຄຄະຂອງພຣະສະກະທາຄາມີນັ້ນຊື່ວ່າ **ສະກະທາຄາມິມັຄຄະ**

໓. **ເຕນ ສມ຺ປຍຸຕ຺ຕໍ ຈິຕ຺ຕໍ ສກທາຄາມິມຄ຺ຄຈິຕ຺ຕໍ ໆ** ຈິດທີ່ສົມປະຍຸດດ້ວຍສະກະທາຄາມິມັຄຄະນັ້ນ ຊື່ວ່າ **ສະກະທາຄາມິມັຄຄະຈິດ**

**ສະກະທາຄາມິມັຄຄະຈິດ** ເກີດຂຶ້ນແກ່ບຸຄຄົລໃດ ບຸຄຄົລນັ້ນໄດ້ຊື່ວ່າ **ສະກະທາຄາມິມັຄຄະບຸຄຄົລ**

**ສະກະທາຄາມິຜົລຈິດ** ເກີດຂຶ້ນແກ່ບຸຄຄົລໃດ ບຸຄຄົລນັ້ນໄດ້ຊື່ວ່າ **ສະກະທາຄາມິຜົລບຸຄຄົລ**

**ສະກະທາຄາມິຜົລບຸຄຄົລ**ນີ້ແຫລະທີ່ເອີ້ນວ່າ **ພຣະສະກະທາຄາມີ** ບາງເທື່ອເອີ້ນວ່າ **ພຣະສະກິທາຄາມີ** ເປັນເສກຂະບຸຄຄົລເໝືອນກັນ ເພາະຍັງຕ້ອງສຶກສາ ຄືປະຕິບັດໃຫ້ບັຣລຸເປັນພຣະອະຣະຫັນຕ໌ຕໍ່ໄປ

ເມື່ອກ່າວໂດຍການພົ້ນໂລກແລ້ວ ສະກະທາຄາມິມັຄຄະຈິດບໍ່ໄດ້ພົ້ນໂລກເພີ່ມຂຶ້ນອີກພຽງແຕ່ພົ້ນການໂລກ ອັນເປັນສ່ວນອະບາຍະພູມິໂດຍອຳນາຈແຫ່ງໂສດາປັດຕິມັຄຄະຈິດເທົ່ານັ້ນ

ເມື່ອກ່າວໂດຍການປະຫານກິເລສແລ້ວ ສະກະທາຄາມິມັຄຄະຈິດກໍຫາໄດ້ປະຫານກິເລສເປັນສະມຸຈເຈດເພີ່ມຂຶ້ນອີກແຕ່ຢ່າງໃດບໍ່ ເປັນແຕ່ພຽງທຳໃຫ້ກິເລສທີ່ເຫລືອຈາກໂສດາບັນປັດຕິມັຄຄະຈິດໄດ້ປະຫານມາແລ້ວນັ້ນ ໃຫ້ເບົາບາງລົງ ອັນເອີ້ນວ່າ **ຕນຸກະປະຫານ** ເທົ່ານັ້ນ ແມ້ກ່າວໂດຍການປະຫານອະກຸສົລກັມມະບົຖ ສະກະທາຄາມິມັຄຄະຈິດກໍບໍ່ໄດ້ປະຫານເພີ່ມຂຶ້ນເປັນແຕ່ພຽງທຳໃຫ້ເບົາບາງລົງ ເຊັ່ນກັນ

***ໃນວິສຸທທິມັຄຄະມະຫາຕິກາສແດງວ່າ ພຣະສະກະທາຄາມີ ນີ້ ມີ ໕ ຈຳພວກ ຄື***

໑. **ອິທ ປຕ຺ວາ ອິທ ປຣິນິພ຺ພາຢີ ໆ** ເປັນພຣະສະກະທາຄາມີ ທີ່ບັຣລຸສະກະທາຄາມິຜົລໃນມະນຸດໂລກ ແລະປະຣິນິພພານໃນມະນຸດໂລກນີ້

໒. **ຕຕ຺ຖ ປຕ຺ວາ ຕຕ຺ຖ ປຣິນິພ຺ພາຢີ** ເປັນພຣະສະກະທາຄາມີ ທີ່ບັຣລຸສະກະທາຄາມິຜົລໃນເທວະໂລກ ແລະປະຣິນິພພານໃນເທວະໂລກ ນັ້ນແຫລະ

໓. **ອິສ ປຕ຺ວາ ຕຕ຺ຖ ປຣິນິພ຺ພາຢີ** ສໍາເຣັຈເປັນພຣະສກທາຄາມີໃນມນຸษย໌ໂລກນີ້ ແຕ່ປຣິນິພພານໃນເທວໂລກພຸ້ນ

໔. **ຕຕ຺ຖ ປຕ຺ວາ ອິສ ປຣິນິພ຺ພາຢີ** ສໍາເຣັຈເປັນພຣະສກທາຄາມີໃນເທວໂລກພຸ້ນ ມາປຣິນິພພານໃນມນຸษย໌ໂລກນີ້

໕. **ອິສ ປຕ຺ວາ ຕຕ຺ຖ ນິພ຺ພຕ຺ຕິຕ຺ວາ ອິສ ປຣິນິພ຺ພາຢີ** ສໍາເຣັຈເປັນພຣະສກທາຄາມີໃນມນຸษย໌ໂລກນີ້ ໄປບັງເກີດໃນເທວໂລກພຸ້ນແລ້ວກັບມາປຣິນິພພານໃນມນຸษย໌ໂລກນີ້

## ອນາຄາມີມັຄຄຈິຕ ຄູ່ກັບ ອນາຄາມີຜົລຈິຕ

**ອນາຄາມີມັຄຄຈິຕ** ມາຈາກຄໍາວ່າ **ນ** (ບໍ່) + **ອາຄາມີ** (ກັບມາ) + **ມັຄຄ** (ທາງ) + **ຈິຕ** ຣວມແປລຄວາມວ່າ ***"ຈິຕເຖິງຊຶ່ງທາງທີ່ບໍ່ກັບມາອີກ"*** ມີຄວາມຫມາຍວ່າເປັນຜູ້ບໍ່ກັບມາປຜິສົນທິໃນກາມໂລກອີກ ຄືຈະຕ້ອງໄປເກີດເປັນພຣົຫ໌ມບຸຄຄົລໃນພຣົຫ໌ມໂລກແນ່ນອນ

**ວຈນັຕຖະ** ຂອງອນາຄາມີມັຄຄຈິຕ ມີວ່າ:

໑. **ປຜິສນ຺ທິວເສນ ອິມໍ ກາມທາຕຸ ນ ອາຄຈ຺ຉຕີຕິ ອນາຄາມີ ຯ** ພຣະອຣິຍບຸຄຄົລຜູ້ບໍ່ກັບມາເກີດມາສູ່ກາມໂລກນີ້ອີກດ້ວຍອໍານາຈປຜິສົນທິ ຊື່ວ່າ **ອນາຄາມີ**

໒. **ຕສ຺ສ ມຄ຺ໂຄ ອນາຄາມິມຄ຺ໂຄ ຯ** ມັຄຄແຫ່ງພຣະອຣິຍບຸຄຄົລຜູ້ອນາຄາມີນັ້ນ ຊື່ວ່າ **ອນາຄາມີມັຄຄ**

໓. **ເຕນ ສມ຺ປຍຸຕ຺ຕໍ ຈິຕ຺ຕໍ ອນາຄາມິມຄ຺ຄຈິຕ຺ຕໍ ຯ** ຈິຕທີ່ສັມປຍຸຕຕດ້ວຍອນາຄາມີມັຄຄນັ້ນ ຊື່ວ່າ **ອນາຄາມີມັຄຄຈິຕ**

- ☞ **ອນາຄາມີມັຄຄຈິຕ** ເກີດຂຶ້ນແກ່ບຸຄຄົລໃດ ບຸຄຄົລນັ້ນໄດ້ຊື່ວ່າອນາຄາມີມັຄຄບຸຄຄົລ
- ☞ **ອນາຄາມີຜົລຈິຕ** ເກີດຂຶ້ນແກ່ບຸຄຄົລໃດ ບຸຄຄົລນັ້ນໄດ້ຊື່ວ່າອນາຄາມີຜົລບຸຄຄົລ
- ☞ **ອນາຄາມີຜົລບຸຄຄົລ** ນີ້ແຫລະເອີ້ນວ່າ ພຣະອນາຄາມີ ຍັງເປັນເສກຂບຸຄຄົລເຫມືອນກັນ ເພາະຍັງຈະຕ້ອງສຶກສາຄືປຜິບັຕິຕໍ່ໄປໃຫ້ບັຣລຸອຣຫັຕຕຜົລ
- ☞ **ອນາຄາມີມັຄຄຈິຕ** ເປັນຈິຕທີ່ກໍາລັງພົ້ນຈາກກາມໂລກ.ນສ່ວນທີ່ເປັນມນຸษย໌ໂລກແລະເທວໂລກອີກ
- ☞ **ອນາຄາມີຜົລຈິຕ** ເປັນຈິຕທີ່ພົ້ນແລ້ວຈາກກາມໂລກໂດຍເດັດຂາດ ຫມາຍຄວາມວ່າ ພຣະອນາຄາມີເມື່ອຈຸຕິແລ້ວຈະບໍ່ມາປຜິສົນທິໃນ ກາມໂລກ ອີກເລີຍ ແຕ່ຈະໄປຜິສນທິເປັນພຣົຫ໌ມບຸຄຄົລໃນພຣົຫ໌ມໂລກແນ່ນອນ
- ☞ **ອນາຄາມີມັຄຄຈິຕ** ເປັນຈິຕທີ່ກໍາລັງປຣະຫາຣກິເລສ ກ່າວໂດຍຈິຕກໍປຣະຫາຣໂທຫມູລຈິຕ ໒ ດວງ
- ☞ **ອນາຄາມີຜົລຈິຕ** ເປັນຈິຕທີ່ປຣະຫາຣແລ້ວຊຶ່ງໂທສຈິຕ ໒ ດວງ ໂດຍເດັດຂາດເປັນສມຸຈເຈທປຫານ

ກ່າວໂດຍອກຸສົລກັມມບົຖ ໑໐ ອນາຄາມີມັຄຄຈິຕເປັນຈິຕທີ່ກໍາລັງປຣະຫາຣອກຸສົລກັມມບົຖເພີ່ມຂຶ້ນອີກ ໓ ຄື **ປິສຸນາວາຈາ ຜຣຸສວາຈ** ແລະ **ພຍາບາທ**

ອນາຄາມີຜົລຈິຕ ເປັນຈິຕທີ່ປຣະຫາຣແລ້ວຊຶ່ງກິເລສເພີ່ມຂຶ້ນອີກ ໓ ປຣະການນັ້ນໂດຍເດັດຂາດຂາດເປັນສມຸຈເຈທປຫານ

## ພຣະອນາຄາມີ ມີ ໕ ຈຳພວກ ຄື

໑. **ອນ຺ຕຣປຣິນິພ຺ພາຢີ ฯ** ພຣະອນາຄາມີ ຜູ້ເຖິງຊຶ່ງປຣິນິພພານໃນເຄິ່ງທຳອິດແຫ່ງອາຍຸກາລໃນภູມິນັ້ນ

໒. **ອຸປຫຈ຺ຈປຣິນິພ຺ພາຢີ ฯ** ພຣະອນາຄາມີ ຜູ້ເຖິງຊຶ່ງປຣິນິພພານໃນເຄິ່ງຫລັງແຫ່ງອາຍຸກາລໃນภູມິນັ້ນ

໓. **ອສງ຺ຂາຣປຣິນິພ຺ພາຢີ ฯ** ພຣະອນາຄາມີ ຜູ້ບໍ່ຕ້ອງໃຊ້ຄວາມພຽຣແຮງກລ້າ ກໍເຖິງຊຶ່ງປຣິນິພພານ

໔. **ສສງ຺ຂາຣປຣິນິພ຺ພາຢີ ฯ** ພຣະອນາຄາມີ ຜູ້ຕ້ອງຕັ້ງອົກຕັ້ງໃຈພາກພຽຣຢ່າງແຮງກລ້າ ຈຶ່ງຈະເຖິງຊຶ່ງປຣິນິພພານ

໕. **ອຸທ຺ທໍໂສຕອກນິຕ຺ຖຄາມີ ฯ** ພຣະອນາຄາມີ ຜູ້ມີກຣະແສໄປເຖິງອກນິຜຖภູມິ ຈຶ່ງຈະເຖິງຊຶ່ງປຣິນິພພານ

## ອຣຫັຕຕມັຄຄຈິຕ ຄູ່ກັບ ອຣຫັຕຕຜົລຈິຕ

**ອຣຫັຕມັຄຄຈິຕ** ມາຈາກຄຳວ່າ **ອຣຫັຕຕ** (ຜູ້ຄວຣບູຊາຢ່າງຍິ່ງ) + **ມັຄຄ** (ທາງ) + **ຈິຕ** ຣວມແປລວ່າ ຈິຕເຖິງທາງທີ່ເປັນຜູ້ຄວຣແກ່ການບູຊາຢ່າງຍິ່ງ

**ວຈນັຕຖະ** ຂອງ ອຣຫັຕຕມັຄຄຈິຕ ມີວ່າ:

໑. **ອຄ຺ຄທກ຺ຂິເນຢ຺ຢກາເວນ ປູຊາວິເສສໍ ອຣຫາຕີຕິ ອຣຫາ ฯ** ພຣະອຣິຍບຸຄຄົລຜູ້ຄວຣແກ່ການບູຊາອັນວິເສສ ເພາະເປັນຜູ້ຄວຣແກ່ທັກສິຕາອັນເລີສນັ້ນ ຊື່ວ່າ **ອຣຫັນຕ໌**

໒. **ຕສ຺ສ ภາໂວ ອຣຫຕ຺ຕໍ ຈຕ຺ຕຖຜົລສ຺ສເສຕໍ ອທິວຈນໍ ฯ** ຄວາມເປັນແຫ່ງພຣະອຣິຍບຸຄຄົລຜູ້ຄວຣແກ່ການອັນວິເສສນັ້ນ ຊື່ວ່າ **ອຣຫັຕຕ** ຄຳວ່າ ອຣຫັຕຕນີ້ເປັນຊື່ແຫ່ງ **ອຣຫັຕຕຜົລ**

໓. **ຕສ຺ສ ອາຄມນກູໂຕ ມຄ຺ໂຄ ອຣຫຕ຺ຕມຄ຺ໂຄ ฯ** ມັຄຄເປັນທີ່ມາແຫ່ງອຣຫັຕຕຜົລນັ້ນ ຊື່ວ່າ ອຣຫັຕຕມັຄຄ

໔. **ເຕນ ສມ຺ປຢ຺ຕ຺ຕໍ ຈິຕ຺ຕໍ ອຣຫຕ຺ຕມຄ຺ຄຈິຕ຺ຕໍ ฯ** ຈິຕທີ່ສັມປຢຸຕຕດ້ວຍອຣຫັຕຕມັຄຄນັ້ນ ຊື່ວ່າ **ອຣຫັຕຕມັຄຄຈິຕ**

☞ **ອຣຫັຕຕມັຄຄຈິຕ** ເກີດຂຶ້ນແກ່ບຸຄຄົລໃດ ບຸຄຄົລນັ້ນໄດ້ຊື່ວ່າອຣຫັຕຕມັຄຄບຸຄຄົລ

☞ **ອຣຫັຕຕຜົລຈິຕ** ເກີດຂຶ້ນແກ່ບຸຄຄົລໃດ ບຸຄຄົລນັ້ນໄດ້ຊື່ວ່າອຣຫັຕຕຜົລບຸຄຄົລ

☞ **ອຣຫັຕຕຜົລບຸຄຄົລ** ນີ້ແຫລະ ເອີ້ນວ່າ ພຣະອຣຫັນຕ໌ ເປັນພຣະ ຂີຕາສົພ ຄືຜູ້ທີ່ສິ້ນອາສວະກິເລສແລ້ວ ເປັນອເສກຂບຸຄຄົລ ຄືບຸຄຄົລທີ່ບໍ່ຕ້ອງສຶກສາ ບໍ່ຕ້ອງປຜິບັຕິອີກແລ້ວ ເພາະບໍຣິສຸທສິຫມົດຈົດຈິນສິ້ນເຊີງແລ້ວ

☞ **ອຣຫັຕຕມັຄຄຈິຕ** ເປັນຈິຕທີ່ກຳລັງພົ້ນຈາກຣູປໂລກແລະອຣູປໂລກ (ອນາຄາມີພົ້ນຈາກກາມໂລກແລ້ວ ນີ້ກຳລັງພົ້ນຈາກຣູປໂລກແລະ ອຣູປໂລກອີກ)

☞ **ອຣຫັຕຕຜິລຈິຕ** ເປັນຈິຕທີ່ພົ້ນແລ້ວຈາກຣູປໂລກແລະອຣູປໂລກໂດຍເດັດຂາດຫມາຍຄວາມວ່າ ພຣະອຣຫັນຕ໌ເມື່ອປຣິນິພພານແລ້ວ ບໍ່ຕ້ອງປຜິສົນທິອີກເລີຍ ເປັນອັນສິ້ນກົພສິ້ນຊາຕິ ພົ້ນຈາກສັງສາຣວັຜຜ໌ ບໍ່ຕ້ອງວຽນວ່າຍຕາຍເກີດອີກຕໍ່ໄປ

☞ **ອຣຫັຕຕມັຄຄຈິຕ** ເປັນຈິຕທີ່ກຳລັງປຣະຫາຣກິເລສ ກ່າວໂດຍຈິຕ ກໍກຳລັງປຣະຫາຣອກຸສົລຈິຕທີ່ເຫລືອອີກ ໕ ດວງ ຄື ໂລກມູລຈິຕ ທີ່ເປັນທິຜຖິວິປປຢຸຕຕ ໔ ດວງ ແລະໂມຫມູລຈິຕທີ່ເປັນອຸທັຈຈສັມປຢຸຕຕ ໑ ດວງ

☞ **ອຣຫັຕຕຜົລ** ເປັນຈິຕທີ່ປຣະຫາຣແລ້ວຊຶ່ງອກຸສົລຈິຕທີ່ເຫລືອ ໕ ດວງທີ່ກ່າວແລ້ວທຳອິດຂ້າງເທີງນັ້ນໄດ້ໂດຍເດັດຂາດເປັນ ສມຸຈເຈທປຫານ ເປັນອັນວ່າພຣະອຣຫັນຕ໌ບໍ່ມີຈິຕທີ່ເປັນອກຸສົລທັງ ໑໔ ດວງເກີດໃນສັນດານອີກເລີຍ

ກ່າວໂດຍອກຸສົລກັມມບົຖ ໑໐ ອຣຫັຕຕມັຄຄຈິຕ ເປັນຈິຕທີ່ກຳລັງປຣະຫາຣອກຸສົລກັມມບົຖທີ່ເຫລືອອີກ ໔ ຄື **ສັມຜັປປລາປ ໑** ແລະ **ອພິຊຊາ ໑**

**ອຣຫັຕຕຜົລຈິຕ** ເປັນຈິຕທີ່ປຣະຫາຣແລ້ວຊຶ່ງອກຸສົລກັມມບົຖທີ່ເຫລືອ ໔ ປຣະການທີ່ກ່າວແລ້ວນັ້ນໄດ້ໂດຍເດັດຂາດເປັນ ສມຸຈເຈທປຫານ ເປັນອັນວ່າພຣະອຣຫັນຕ໌ບໍ່ມີອກຸສົລກັມມບົຖ ໑໐ ເກີດໃນສັນດານອີກເລີຍ!

## ພຣະອຣຫັນຕ໌ມີຫລາຍປຣະເພທ

**ພຣະອຣຫັນຕ໌** ບາງເທື່ອເອີ້ນວ່າ **ພຣະຂີນາສົພ** ບາງເທື່ອເອີ້ນວ່າ **ອເສກຂບຸຄຄົລ** ທີ່ເອີ້ນວ່າພຣະອຣຫັນຕ໌ຫມາຍຄວາມວ່າ ເປັນບຸຄຄົລ ທີ່ຄວຣສັກກາຣະບູຊາຍິ່ງ ທີ່ເອີ້ນວ່າພຣະຂີນາສົພຫມາຍຄວາມວ່າເປັນບຸຄຄົລທີ່ສິ້ນອາສວກິເລສໂດຍສິ້ນເຊີງແລ້ວ ແລະທີ່ເອີ້ນວ່າ ພຣະອເສກຂບຸຄຄົລນັ້ນຫມາຍເຖິງວ່າ ເປັນຜູ້ທີ່ບໍ່ຕ້ອງສຶກສາຕໍ່ໄປອີກແລ້ວ ເພາະມີສີລສິກຂາ ສມາธິສິກຂາ ປັญญາສິກຂາ ໂດຍບໍຣິບູຣຕ໌ ບໍຣິສຸທธິ໌ແລ້ວ ພຣະອຣຫັນຕ໌ນີ້ຈັດໄດ້ວ່າມີ ໖ ປຣະເພທ ຄື

໑. **ພຣະອຣຫັນຕ໌ທີ່ຕຣັສຮູ້ ອນຸຕຕຣສັມມາສັມໂພธิຍານ ດ້ວຍພຣະອົງຄ໌ເອງ** ແລະສາມາຖໂຜດເວໄນຍສັຕວ໌ໃຫ້ພົ້ນທຸກຂ໌ຄື ໃຫ້ເຖິງອຣິຍມັຄຄອຣິຍຜົລໄດ້ນຳ ເພາະຊົງເປັນຜູ້ທີ່ເຖິງພ້ອມດ້ວຍ **ອາສຍານຸສຍຍານ** ຍານທີ່ສາມາຖຮູ້ອັธຍາສັຍຂອງເວໄນຍສັຕວ໌ທັງຫລາຍ ປຣະການນຶ່ງ ອິນທຣິຍປໂຣປຣິຍັຕຕິຍານ ຍານທີ່ສາມາຖຮູ້ອິນທຣີຍ໌ຂອງສັຕວ໌ ທັງຫລາຍວ່າຍິ່ງ ຫຼື ຫຍ່ອນພຽງໃດ ປຣະການນຶ່ງ ແລະ ສັພພັญญຸຕຕຍານ ຍານທີ່ສາມາຖຮອບຮູ້ສິ້ນຊຶ່ງປວງ ສັງຂຕธັມມ໌ແລະອສັງຂຕธັມມ໌ອີກປຣະການນຶ່ງ ຈຶ່ງໄດ້ຊື່ວ່າ ພຣະສັພພັญญູພຸທธເຈົ້າ ຄືທີ່ຂນານພຣະນາມກັນວ່າ **"ພຣະອຣຫັນຕສັມມາສັມພຸທธເຈົ້າ"** ຫຼື **"ສົມເດັຈພຣະສັມມາສັມພຸທธເຈົ້າ"**

໒. ພຣະອຣຫັນຕ໌ທີ່ຕຣັສຮູ້ດ້ວຍພຣະອົງຄ໌ເອງເຫມືອນກັນ ແຕ່ບໍ່ສາມາຖໂຜດສັຕວ໌ໃຫ້ພົ້ນທຸກຂ໌ໄດ້ ເພາະບໍ່ເຖິງພ້ອມດ້ວຍຍານ ໖ ປຣະການ ດັ່ງກ່າວແລ້ວໃນຂໍ້ ໑ ນັ້ນ ພຣະອຣຫັນຕ໌ປຣະເພທນີ້ໄດ້ຊື່ວ່າ ພຣະອຣຫັນຕ໌ປັຈເຈກພຸທธເຈົ້າ ຫຼື **ພຣະປັຈເຈກພຸທธເຈົ້າ**

ຢາກຈະກ່າວໂດຍອັຕໂນມັຕິວ່າ ທີ່ພຣະປັຈເຈກພຸທລເຈົ້າບໍ່ສາມາຖໂຜດສັຕວ໌ໃຫ້ພົ້ນທຸກຂ໌ໄດ້ນັ້ນ ເປັນດ້ວຍເຫຕຸອີກປຣະການນຶ່ງຄື ໃນຍຸຄນັ້ນບໍ່ມີຜູ້ມີບາຕມີແກ່ກລ້າພໍທີ່ຈະເຂົ້າເຖິງລັມມ໌ອັນປຣະເສີຖເຖິງຂັ້ນນັ້ນໄດ້ ເພາະພຣະປັຈເຈກພຸທລເຈົ້າບັງເກີດມີໄດ້ລະເພາະໃນຍຸຄທີ່ວ່າງພຣະພຸທລສາສນາເທົ່ານັ້ນ ກໍໃນກາລທີ່ວ່າງພຣະພຸທລສາສນາເຊັ່ນນັ້ນ ບຸຄຄົລທັ້ງຫລາຍຍ່ອມປຣາສຈາກສີລລັມມ໌ປຣະກອບແຕ່ກັມມ໌ອັນເປັນອກຸສົລ ໃຜຫລະຈະສາມາຖສັ່ງສອນຜູ້ທີ່ໄຮ້ສີລລັມມ໌ໃຫ້ບັຣລຸເຖິງລັມມ໌ອັນປຣະເສີຖຍິ່ງປານນັ້ນໄດ້ ແມ້ແຕ່ສົມເດັຈພຣະສັມມາ ສັມພຸທລເຈົ້າກໍຊົງພຣະມຫາກຣຸຕາໄດ້ລະເພາະຜູ້ທີ່ຊົງໂຜດໄດ້ເທົ່ານັ້ນ ບໍ່ແມ່ນໂຜດໄດ້ທົ່ວໄປທັ້ງຫມົດ

໓. **ພຣະອຣຫັນຕ໌**ທີ່ຕຣັສຮູ້ **ອຣຫັຕຕມັຄຄ ອຣຫັຕຕຜົລ** ຕາມຄຳສັ່ງສອນຂອງສົມເດັຈພຣະສັມມາສັມພຸທລເຈົ້າ (ຄືບໍ່ໄດ້ຕຣັສຮູ້ເອງ) ນັ້ນ ໄດ້ຊື່ວ່າ **ພຣະອຣຫັນຕ໌** ໄດ້ແກ່ ພຣະອຣຫັນຕ໌ທົ່ວໆ ໄປ ທີ່ນອກຈາກພຣະອຣຫັນຕສັມມາສັມພຸທລເຈົ້າ ແລະ ພຣະອຣຫັນຕປັຈເຈກພຸທລເຈົ້າ

**ພຣະອຣຫັນຕ໌ທົ່ວໆ** ໄປນີ້ຍັງຈຳແນກໄດ້ເປັນ ໔ ປຣະເພທ ຄື **ປັຍຍາວິມຸຕຕິ** ແລະ **ເຈໂຕວິມຸຕຕິ**

**ປັຍຍາວິມຸຕຕິ** ຫມາຍເຖິງພຣະອຣຫັນຕ໌ຜູ້ບໍ່ໄດ້ຊານເລີຍ ກ່າວຄືບໍ່ໄດ້ຈເຣີນສມຖກາວນາບໍ່ໄດ້ທຳຊານ ເປັນແຕ່ຈເຣີນວິປັສສນາກາວນາແຕ່ຢ່າງດຽວຈົນບັຣລຸອຣຫັຕຕມັຄຄອຣຫັຕຕຜົລ ພຣະອຣຫັນຕ໌ຜູ້ທີ່ບໍ່ໄດ້ຊານນີ້ເອີ້ນວ່າ ສຸກຂວິປັສສົກ ພຣະອຣຫັນຕ໌

ສ່ວນ **ເຈໂຕວິມຸຕຕິ** ຫມາຍເຖິງພຣະອຣຫັນຕ໌ຜູ້ທີ່ໄດ້ຊານດ້ວຍ (ຜູ້ທີ່ໄດ້ຊານເອີ້ນວ່າ ຊານລາກີບຸຄຄົລ) ການໄດ້ຊານກໍສາມາຖໄດ້ມາດ້ວຍ ໔ ປຣະການ ຄື:

ກ. ເປັນຜູ້ຈເຣີນສມຖກາວນາຈົນໄດ້ຊານ ເຊັ່ນນີ້ເອີ້ນວ່າ **ປຜິປທາສິທລິຊານ** ໄດ້ຊານດ້ວຍການປຜິບັຕິ ແລ້ວກໍມາຈເຣີນວິປັສສນາ ກາວນາຕາມລຳດັບ ຈົນບັຣລຸພຣະອຣຫັນຕ໌

ຂ. ເປັນຜູ້ທີ່ແມ້ຈະບໍ່ໄດ້ຈເຣີນສມຖກາວນາມາກ່ອນກໍຕາມ ແຕ່ວ່າເມື່ອໄດ້ຈເຣີນວິປັສສນາກາວນາມາຕາມລຳດັບ ຈົນບັຣລຸອຣຫັຕຕມັຄຄ ອຣຫັຕຕຜົລ ດ້ວຍຜົລແຫ່ງບຸຍຍາລິການແຕ່ປາງກ່ອນ ເມື່ອບັຣລຸອຣຫັຕຕຜົລ ກໍເຖິງພ້ອມຊຶ່ງຊານດ້ວຍເຊັ່ນນີ້ເອີ້ນວ່າ **ມັຄຄສິທລິຊານ** ໄດ້ຊານດ້ວຍອຳນາຈແຫ່ງມັຄຄ ຈົນເຖິງໄດ້ອກິຍຍາດ້ວຍກໍມີ ເຊັ່ນ **ພຣະຈຣຸສປັຕຖິກ** ເມື່ອສຳເຣັຈເປັນພຣະອຣຫັນຕ໌ກໍມີອກິຍຍາ ດ້ວຍຄືມີອິທລິຣິທລິເຖິງສຳແດງປາຜິຫາຕຍ໌ ເປັນພຣະພິກຂຸຫລາຍອົງຄ໌ຈົນເຕັມພຣະເຊຕວັນ

ຣວມຄວາມວ່າ ພຣະອຣຫັນຕ໌ປຣະເພທປັຍຍາວິມຸຕຕິ ບໍ່ໄດ້ຊານດ້ວຍເອີ້ນວ່າ **ສຸກຂວິປັສສົກພຣະອຣຫັນຕ໌** ພຣະອຣຫັນຕ໌ປຣະເພທ ເຈໂຕວິມຸຕຕິນັ້ນເປັນຜູ້ໄດ້ຊານດ້ວຍ ເອີ້ນວ່າ**ພຣະອຣຫັນຕຊານລາກີບຸຄຄົລ**

ພຣະອຣຫັນຕ໌ຜູ້ເປັນຊານລາກີບຸຄຄົລນັ້ນ ໄດ້ຊານຈົນເຖິງໄດ້ອກິຍຍາດ້ວຍກໍມີ ໄດ້ຊານກໍຈິງແຕ່ບໍ່ເຖິງໄດ້ອກິຍຍາດ້ວຍກໍມີ ຊານລາກີອຣຫັຕຕບຸຄຄົລນັ້ນທີ່ໄດ້ເຖິງອກິຍຍາດ້ວຍນັ້ນ ບາງອົງຄ໌ກໍໄດ້ພຽງ ອກິຍຍາ ໓ ບາງອົງຄ໌ກໍໄດ້ເຖິງ ອກິຍຍາ ໖

ອກິຍຍາ ໓ ຫຼື ບາງເທື່ອກໍເອີ້ນວ່າ ວິຊາ ໓ ນັ້ນໄດ້ແກ່

( ໑) **ປຸພເພນິວາສນຸສຕິຍາຕ** ຣະລຶກຊາຕິໄດ້

( ໔) **ທິພພຈັກຂຸຍາຓ ຫຼື ຈຸຕູປປາຕຍາຓ ຕາທິພຍ໌** ຮູ້ຈຸຕິແລະປຕິສົນທິຂອງສັຕວ໌ທັ້ງຫລາຍ

( ໖) **ອາສວັກຂຍຍາຓ** ຮູ້ວິຊາທີ່ທຳໃຫ້ຫມົດກິເລສແລະອາສວະ

ລະເພາະອະພິຍຍາຂໍ້ ໖ ນີ້ ຈະເປັນສຸກຂວິປັສສິກພຣະອຣຫັນຕ໌ກໍ່ຕາມ ຫຼື ຊານລາພີອຣຫັຕຕບຸຄຄົລໄດ້ເຖິງອະພິຍຍາດ້ວຍຫຼືບໍ່ກໍ່ຕາມ ຕ້ອງມີອະພິຍຍາຂໍ້ ໖ ນີ້ດ້ວຍທຸກໆ ອົງຄ໌

ອະພິຍຍາ ໖ ຫຼື ບາງເທື່ອກໍ່ເອີ້ນວ່າ ວິຊາ ໖ ນັ້ນ ຄືວິຊາ ໖ ນັ່ນເອງ ແລະເພີ່ມຂຶ້ນອີກ ໖ ຄື

( ໔) **ປຣິຈິຕຕວິຊານນ ຫຼື ເຈໂຕປຣິຍຍາຓ** ຮູ້ຈິຕໃຈຜູ້ອື່ນ

( ໕) **ທິພພໂສຕຍາຓ** ຫູທິພຍ໌

( ໖) **ອິທທິວິທີ** ສຳແດງຣິທທິ໌ໄດ້

ອີກນັຍນຶ່ງນັ້ນ ຈຳແນກພຣະອຣຫັນຕ໌ເປັນ ໔ ປຣະເພທ ໂດຍຈຳແນກເປັນພຣະອຣຫັນຕ໌ຜູ້ມີ **ປຕິສັມພິທາຍາຓ** ແລະພຣະອຣຫັນຕ໌ ຜູ້ບໍ່ມີ **ປຕິສັມພິທາຍາຓ**

**ປຕິສັມພິທາຍາຓ** ຄື ເຖິງພ້ອມດ້ວຍຄວາມຮູ້ອັນແຕກສານ ແປລສັ້ນໆ ວ່າ **ປັນຍາແຕກສານ** ປຕິສັມພິທາຍາຓ ມີ ໔ ປຣະການຄື

໑. **ອຕຖປຕິສມ຺ພິທາຍາຓ** ປັນຍາແຕກສານໃນຜົລທັ້ງປວງ ອັນບັງເກີດຈາກເຫຕຸ ຊື່ວ່າ ອັຕຖະປຕິສັມພິທາຍາຓ

***ອັຕຖະ ຫຼື ຜົລ ນັ້ນໄດ້ແກ່ທັມມ໌ ໕ ປຣະການ ຄື***

| | |
|---|---|
| ກ. **ຍ໌ ກິຍ຺ຈິ ປຈ຺ຈຍສມ຺ພູຕ໌** | ຄືຮູປທັມມ໌ທັ້ງປວງທີ່ເກີດຂຶ້ນໂດຍມີປັຈຈັຍປຣະຊຸມປຸງແຕ່ງ |
| ຂ. **ນິພ຺ພານ໌** | ຄືພຣະນິພພານ |
| ຄ. **ກາສິຕຕ຺ໂຖ** | ຄືອັຖທີ່ກ່າວສັກໃຫ້ຮູ້ວິບາກຂັນທ໌ ໓໔ ດວງ |
| ງ. **ກິຣິຍາຈິຕ຺ຕ໌** | ຄືກິຣິຍາຈິຕ ໑໐ ດວງ |
| ຈ. **ຜລຈິຕ຺ຕ໌** | ຄືຜົລຈິຕ ໔ ດວງ |

໔. **ທມ຺ມປຕິສມ຺ພິທາຍາຓ** ປັນຍາແຕກສານໃນເຫຕຸທີ່ທຳໃຫ້ບັງເກີດຜົລຊື່ວ່າ ທັມມາປຕິສັມພິທາຍາຓ

***ທັມມ໌ ຫຼື ເຫຕຸ ນັ້ນໄດ້ແກ່ທັມມ໌ ໕ ປຣະການ ຄື***

| | |
|---|---|
| ກ. **ໂຍ ໂກຈິ ຜລນິພ຺ພຕ຺ຕໂກ ເຫຕຸ** | ຄືເຫຕຸທັ້ງປວງບັຣດາທີ່ຍັງຜົລໃຫ້ເກີດຂຶ້ນ |
| ຂ. **ອຣິຍມຄ຺ໂຄ** | ຄືມັຄຄຈິຕທັ້ງ ໔ |
| ຄ. **ກາສິຕ໌** | ຄືພຣະທັມມ໌ທັ້ງ ໓ ປີຕົກ |
| ງ. **ກຸສລຈິຕ຺ຕ໌** | ຄືກຸສົລຈິຕ ໑໗ ດວງ |
| ຈ. **ອກຸສລຈິຕ຺ຕ໌** | ຄືອກຸສົລຈິຕ ໑໔ ດວງ |

໓. **ນິຣຸຕຕິປະຕິສັມພິທາຍານ** ປັນຍາແຕກສານໃນພາສາ ຄືບັນຍັດແຫ່ງອັດຖະປະຕິສັມພິທາແລະທັມມະປະຕິສັມພິທາຍ່ອມມີດ້ວຍນິຣຸຕຕິໃດ ຄວາມຮູ້ແຕກສານໃນອັນກ່າວ **ສະພາວະນິຣຸຕຕິ** ນັ້ນ ຊື່ວ່າ ນິຣຸຕຕິປະຕິສັມພິທາຍານ ຫມາຍຄວາມວ່າຮູ້ຈັກຄຳເວົ້າຫຼືພາສາອັນເປັນບັນຍັດທີ່ເອີ້ນວ່າ ສັວທາໃນການອະທິບາຍຂະຍາຍຄວາມແຫ່ງອັດຖະປະຕິສັມພິທາແລະທັມມະປະຕິສັມພິທາ ໃຫ້ຜູ້ສະດັບຮັບຟັງຮູ້ແລະເຂົ້າໃຈໄດ້ແຈ່ມແຈ້ງເລິກຊຶ້ງໂດຍຖ້ວນຖີ່ ເຊັ່ນນີ້ເປັນຕົ້ນ

໔. **ປະຕິພານປະຕິສັມພິທາຍານ** ປັນຍາແຕກສານໃນປະຕິພານ ຄືມີປັນຍາວ່ອງໄວ ໄຫວພິບ ລຽບແຫລມ ຄົມຄາຍໃນການຕອບໂຕ້ **ອັດຖະປະຕິສັມພິທາ ທັມມະປະຕິສັມພິທາ** ແລະ**ນິຣຸຕຕິປະຕິສັມພິທາ** ທັງ ໓ ນັ້ນ ໄດ້ຢ່າງຖືກຕ້ອງ ຄ່ອງແຄ່ວຊັດແຈ້ງໂດຍລັບ ພລັນທັນທີ ຄວາມຮູ້ແຕກສານເຊັ່ນນີ້ແຫລະຊື່ວ່າ ປະຕິພານປະຕິສັມພິທາຍານ

## ໂລກຸດຕະຈິດຢ່າງພິສດານ

ໂລກຸດຕະຈິດຢ່າງພິສດານນັ້ນ ຄືໂລກຸດຕະຈິດຢ່າງຫຍໍ້ ໘ ດວງນັ້ນເອງແຈກໄປຕາມຊານທີ່ໄດ້ທີ່ເຖິງ ຊຶ່ງມີຢູ່ ໕ ຊານນັ້ນ ເຊັ່ນໂສດາປັດຕິມັຄຄະຈິດ ໑ ດວງ ກໍມີໄດ້ທັງທີ່ໄດ້ປະຖົມຊານ ໑, ທີ່ໄດ້ທຸຕິຍະຊານ ໑, ທີ່ໄດ້ຕະຕິຍະຊານ ໑, ຈະຕຸຕຖະຊານ ໑ ແລະປັນຈະມະຊານ ໑ ຣວມ ເປັນ ໕ ຊານ ຫຼື ໕ ຊັ້ນ ດັ່ງນີ້ ໂສດາປັດຕິມັຄຄະຈິດທີ່ປະກອບດ້ວຍຊານ ກໍມີ ໕ ດວງ

ມັຄຄະຈິດໂດຍຫຍໍ້ ໔ ດວງ ປະກອບດ້ວຍຊານ ໕ ຊັ້ນ ຈຶ່ງມີມັຄຄະຈິດໂດຍພິສດານເປັນ ໒໐ ດວງ

ລະເພາະມັຄຄະຈິດໂດຍຫຍໍ້ ໔ ດວງ ຊຶ່ງແມ້ຈະບໍ່ແມ່ນຈິດທີ່ປະກອບດ້ວຍຊານ ແຕ່ທີ່ຖືວ່າເປັນປະຖົມຊານ ດ້ວຍ ດັ່ງມີຄາຖາສັງຄະຫະທີ່ ໑໕ ກ່າວໄວ້ ດັ່ງຈະເຫັນໄດ້ໃນເມື່ອກ່າວເຖິງຄາຖາສັງຄະຫະນັ້ນ

ອີກຢ່າງ ມັຄຄະຈິດກໍບໍ່ໄດ້ແຈກໄປຕາມອະຣູປະຊານອີກ ໔ ຊານນັ້ນດ້ວຍກໍເພາະເຫດຸວ່າ ອະຣູປະຊານທັງ ໔ ນັ້ນນັບເປັນປັນຈະມະຊານ ດ້ວຍວ່າມີອົງຄ໌ຊານພຽງ ໒ ຄື ອຸເປກຂາກັບເອກັຄຄະຕາເທົ່າກັນແລະເຫມືອນກັນກັບຣູປາວະຈະຣະປັນຈະມະຊານ ເປັນແຕ່ອາຣົມມ໌ຕ່າງກັນເທົ່ານັ້ນເອງ ສ່ວນອົງຄ໌ຊານຄົງເທົ່າກັນ ດັ່ງນັ້ນຈຶ່ງນັບວ່າຊານທັງ ໙ ຊານມີພຽງ ໕ ຊັ້ນ ດ້ວຍເຫດຸນີ້ມັຄຄະຈິດ ໔ ດວງ ຈຳແນກໄປ ຕາມຊານ ໕ ຊັ້ນຈຶ່ງເປັນ ໒໐ ດວງ

ໂດຍທຳນອງດຽວກັນ ຜົລຈິດໂດຍຫຍໍ້ ໔ ດວງ ເມື່ອຈຳແນກໄປຕາມຊານທີ່ໄດ້ທີ່ເຖິງ ຊຶ່ງມີ ໕ ຊັ້ນ ຈຶ່ງເປັນຜົລຈິດຢ່າງພິສດານ ໒໐ ດວງ

ຣວມ ມັຄຄະຈິດຢ່າງພິສດານ ໒໐ ດວງ ກັບຜົລຈິດຢ່າງພິສດານ ໒໐ ດວງ ຈຶ່ງເປັນໂລກຸດຕະຈິດຢ່າງພິສດານ ໔໐ ດວງ

*ໂລກຸດຕະກຸສົລຈິດ ຫຼື ມັຄຄະຈິດ ຢ່າງພິສດານ ໒໐ ດວງນັ້ນ ໄດ້ແກ່*

໑. **ວິຕກ຺ກວິຈາຣປີຕິສຸຂເອກ຺ຄຄຕາ ສຫິຕໍ ປຖມຊ຺ຈານໂສຕາປຕ຺ຕິມຄ຺ຄຈິຕ຺ຕໍ** ໂສດາປັດຕິມັຄຄະຈິດ ເກີດພ້ອມດ້ວຍ ວິຕົກ ວິຈານ ປີຕິ ສຸຂ ເອກັຄຄະຕາ ເປັນປະຖົມຊານ

໒. **ວິຈາຣປີຕິສຸຂເອກ຺ຄຄຕາ ສຫິຕໍ ທຸຕິຍຊ຺ຈານໂສຕາປຕ຺ຕິມຄ຺ຄຈິຕ຺ຕໍ** ໂສດາປັດຕິມັຄຄະຈິດ ເກີດພ້ອມດ້ວຍ ວິຈານ ປີຕິ ສຸຂ ເອກັຄຄະຕາ ເປັນທຸຕິຍະຊານ

๓. **ປີຕິສຸເຂກຄຄຕາ ສຫິຕໍ ຕຕິຍຊານໂສຕາປຕ຺ຕິມຄ຺ຄຈິຕ຺ຕໍ** ໂສດາປັດຕິມັຄຄຈິຕ ເກີດພ້ອມດ້ວຍ ປີຕິ ສຸຂ ເອກັຄຄຕາ ເປັນຕະຕິຍຊານ

໔. **ສຸເຂກຄຄຕາ ສຫິຕໍ ຈຕຸຕ຺ຖຊານໂສຕາປຕ຺ຕິມຄ຺ຄຈິຕ຺ຕໍ** ໂສດາປັດຕິມັຄຄຈິຕ ເກີດພ້ອມດ້ວຍ ສຸຂ ເອກັຄຄຕາ ເປັນຈຕຸຕຖຊານ

໕. **ອຸເປກ຺ເຂກຄຄຕາ ສຫິຕໍ ປຍ຺ຈມຊານໂສຕາປຕ຺ຕິມຄ຺ຄຈິຕ຺ຕໍ** ໂສດາປັດຕິມັຄຄຈິຕ ເກີດພ້ອມດ້ວຍ ອຸເບກຂາ ເອກັຄຄຕາ ເປັນປັຍຈມຊານ

ສກທາຄາມິມັຄຄຈິຕ ທີ່ປະກອບດ້ວຍຊານ ເປັນ ໕ ດວງ ອນາຄາມິມັຄຄຈິຕ ທີ່ປະກອບດ້ວຍຊານ ເປັນ ໕ ດວງ ແລະ ອຣຫັຕຕມັຄຄຈິຕ ທີ່ປະກອບດ້ວຍຊານເປັນ ໕ ດວງ ກໍມີນັຍເປັນທຳນອງດຽວກັນນີ້

*ໂລກຸຕຕຣວິບາກຈິຕ ຫຼື ຜົລຈິຕ ຢ່າງພິສດານ ໑໐ ດວງນັ້ນໄດ້ແກ່*

໑. **ວິຕກວິຈາຣປີຕິສຸເຂກຄຄຕາ ສຫິຕໍ ປຖມຊານໂສຕາປຕ຺ຕິຜລຈິຕ຺ຕໍ** ໂສດາປັດຕິຜົລຈິຕ ເກີດພ້ອມດ້ວຍ ວິຕົກ ວິຈາຣ ປີຕິ ສຸຂ ເອກັຄຄຕາ ເປັນປຖົມຊານ

໒. **ວິຈາຣປີຕິສຸເຂກຄຄຕາ ສຫິຕໍ ທຸຕິຍຊານໂສຕາປຕ຺ຕິຜລຈິຕ຺ຕໍ** ໂສດາປັດຕິຜົລຈິຕ ເກີດພ້ອມດ້ວຍ ວິຈາຣ ປີຕິ ສຸຂ ເອກັຄຄຕາ ເປັນທຸຕິຍຊານ

๓. **ປີຕິສຸເຂກຄຄຕາ ສຫິຕໍ ຕຕິຍຊານໂສຕາປຕ຺ຕິຜລຈິຕ຺ຕໍ** ໂສດາປັດຕິຜົລຈິຕ ເກີດພ້ອມດ້ວຍ ປີຕິ ສຸຂ ເອກັຄຄຕາ ເປັນຕະຕິຍຊານ

໔. **ສຸເຂກຄຄຕາ ສຫິຕໍ ຈຕຸຕ຺ຖຊານໂສຕາປຕ຺ຕິຜລຈິຕ຺ຕໍ** ໂສດາປັດຕິຜົລຈິຕ ເກີດພ້ອມດ້ວຍ ສຸຂ ເອກັຄຄຕາ ເປັນຈຕຸຕຖຊານ

໕. **ອຸເປກ຺ເຂກຄຄຕາ ສຫິຕໍ ປຍ຺ຈມຊານໂສຕາປຕ຺ຕິຜລຈິຕ຺ຕໍ** ໂສດາປັດຕິຜົລຈິຕ ເກີດພ້ອມດ້ວຍ ອຸເບກຂາ ເອກັຄຄຕາ ເປັນປັຍຈມຊານ

ສກທາຄາມິຜົລຈິຕ ທີ່ປະກອບດ້ວຍຊານ ເປັນ ໕ ດວງ ອນາຄາມິຜົລຈິຕທີ່ປະກອບດ້ວຍຊານ ເປັນ ໕ ດວງ ແລະ ອຣຫັຕຕຜົລຈິຕ ທີ່ປະກອບດ້ວຍຊານເປັນ ໕ ດວງ ກໍມີນັຍທຳນອງດຽວກັນນີ້

## ຈຳແນກໂລກຸຕຕຈິຕໂດຍຊາຕິເພທເປັນຕົ້ນ

໑. **ຊາຕິເພທ** ໂລກຸຕຕຈິຕໂດຍຫຍໍ້ ໘ ດວງກໍດີ ໂລກຸຕຕຈິຕໂດຍພິສດານ ໔໐ ດວງກໍດີ ຈຳແນກໂດຍຊາຕິໄດ້ ໒ ຄື

☞ **ໂລກຸຕຕຣກຸສົລ**ຈິຕ ຫຼື **ມັຄຄຈິຕ** ໂດຍຫຍໍ້ ໔ ດວງກໍດີ ໂດຍພິສດານ ໑໐ ດວງກໍດີ ເປັນຊາຕິກຸສົລ

☞ **ໂລກຸຕຕຣວິບາກຈິຕ ຫຼື ຜົລຈິຕ** ໂດຍຫຍໍ້ ໔ ດວງກໍດີ ໂດຍພິສດານ ໑໐ ດວງກໍດີ ເປັນຊາຕິວິບາກ

ດັ່ງນັ້ນຈຶ່ງເອີ້ນກັນສັ້ນໆ ວ່າ **ມັຄຄເປັນກຸສົລ ຜົລເປັນວິບາກ**

໓. **ພູມິໂກາຫ** ໂລກຸຕຕຈິຕເປັນໂລກຸຕຕຣະພູມິ ຄືເປັນຈິຕຊັ້ນທີ່ເໜືອຍິ່ງກວ່າຈິຕຊັ້ນໃດໆ ທັງໝົດ

໔. **ເວທນາໂກາຫ** ໂລກຸຕຕຈິຕໂດຍຫຍໍ້ ໘ ດວງນັ້ນ ຖ້າມຫາກຸສິລຍາຕສັມປຢຸຕຕຈິຕທີ່ຈະເຣີນວິປັສສນາກາວນາເປັນໂສມນັສເວທນາ ຈິນໂລກຸຕຕຈິຕເກີດ ໂລກຸຕຕຈິຕທີ່ເກີດຂຶ້ນນັ້ນກໍເປັນໂສມນັສເວທນາເຊັ່ນດຽວກັນ

- ຖ້າມຫາກຸສິລຍາຕສັມປຢຸຕຕຈິຕ ທີ່ຈະເຣີນວິປັສສນາກາວນານັ້ນເປັນອຸເບກຂາເວທນາຈິນໂລກຸຕຕຈິຕເກີດ ໂລກຸຕຕຈິຕທີ່ເກີດ ຂຶ້ນນັ້ນ ກໍເປັນອຸເບກຂາເວທນາເຊັ່ນດຽວກັນ
- ສ່ວນໂລກຸຕຕຈິຕໂດຍພິສດານ ໔໐ ດວງນັ້ນ ເປັນໂລກຸຕຕຈິຕທີ່ປຣະກອບດ້ວຍຊານ ຊຶ່ງຊານທີ່ປຣະກອບກັບໂລກຸຕຕຈິຕນັ້ນມີເວທນາຢ່າງໃດ ໂລກຸຕຕຈິຕນັ້ນກໍມີເວທນາຢ່າງນັ້ນ ກ່າວຄື
- ໂລກຸຕຕຈິຕທີ່ປຣະກອບດ້ວຍປຖົມຊານກໍດີ ທຸຕິຍຊານກໍດີ ຕຕິຍຊານກໍດີ ແມ້ຈຕຸຕຖຊານກໍດີ ເຫລົ່ານີ້ຍ່ອມເປັນໂສມນັສເວທນາ ເພາະຊານເຫລົ່ານັ້ນທີ່ປຣະກອບໂລກຸຕຕຈິຕເຫລົ່ານີ້ ເປັນຊານທີ່ເກີດພ້ອມກັບໂສມນັສເວທນາ
- ໂລກຸຕຕຈິຕທີ່ປຣະກອບດ້ວຍປັນຈມຊານ ຍ່ອມເປັນອຸເບກຂາເວທນາ ເພາະເປັນປັນຈມຊານນັ້ນ ເປັນຊານທີ່ເກີດພ້ອມກັບອຸເບກຂາເວທນາ

໕. **ເຫຕຸໂກາຫ** ໂລກຸຕຕຈິຕເປັນສເຫຕຸກຈິຕ ເປັນຈິຕທີ່ມີສັມປຢຸຕຕເຫຕຸແລະເຫຕຸທີ່ປຣະກອບກໍຄົບທັງ ໓ ເຫຕຸເຕັມທີ່ ຄື ອໂລກເຫຕຸ ອໂທສເຫຕຸ ແລະອໂມຫເຫຕຸ

໖. **ສັງຂາຣໂກາຫ** ໂລກຸຕຕຈິຕໂດຍຫຍໍ້ ໘ ດວງກໍດີ ໂດຍພິສດານ ໔໐ ດວງກໍດີ ເປັນສສັງຂາຣິກຈິຕທັງໝົດ ເພາະໂລກຸຕຕຈິຕຈະເກີດ ໄດ້ກໍໂດຍອາສັຍມຫາກຸສິລຍາຕສັມປຢຸຕຕຈິຕ ຈະເຣີນວິປັສສນາກາວນາມາກ່ອນ ຈຶ່ງຕ້ອງຖືວ່າມຫາກຸສິລຍາຕສັມປຢຸຕຕຈິຕນັ້ນແຫລະ ເປັນສິ່ງທີ່ຊັກຈູງໃຫ້ໂລກຸຕຕຈິຕເກີດຂຶ້ນ

໗. **ສັມປຢຸຕຕເຫຕຸ** ໂລກຸຕຕຈິຕເປັນຍາຕສັມປຢຸຕຕ ເປັນຈິຕທີ່ປຣະກອບດ້ວຍປັນຍາ ເປັນຈິຕທີ່ມີປັນຍາ ຖ້າເປັນຈິຕທີ່ບໍ່ມີປັນຍາ ເປັນຈິຕຍາຕວິປປຢຸຕຕ ບໍ່ໃຊ້ປັນຍາປຣະກອບດ້ວຍແລ້ວ ໂລກຸຕຕຈິຕຈະເກີດຂຶ້ນບໍ່ໄດ້ເລີຍເປັນອັນຂາດ

໘. **ໂສກຕໂກາຫ** ໂລກຸຕຕຈິຕເປັນໂສກຕຈິຕ ເປັນຈິຕທີ່ປຣະເສີຖຍິ່ງກວ່າຈິຕໃດໆ ທັງປວງ ບໍ່ມີຈິຕໃດຈະປຣະເສີຖທຽບທຽມໄດ້ເລີຍ

໙. **ໂລກໂກາຫ** ໂລກຸຕຕຈິຕປຣະເກທດຽວເທົ່ານີ້ແຫລະເປັນໂລກຸຕຕຣະ ບໍ່ແມ່ນໂລກິຍະ ນອກຈາກໂລກຸຕຕຈິຕນີ້ແລ້ວ ຈິຕອື່ນໆ ນັ້ນ ເປັນໂລກິຍຈິຕທັງໝົດ

໑໐. **ຊານໂກາຫ** ໂລກຸຕຕຈິຕໂດຍຫຍໍ້ ໘ ດວງເປັນຈິຕທີ່ບໍ່ມີຊານຈິຕປຣະກອບດ້ວຍ ຈຶ່ງເປັນອຊານຈິຕ

ແຕ່ແນວໃດກໍດີ ໂລກຸຕຕຈິຕໂດຍຫຍໍ້ ໘ ດວງທີ່ບໍ່ໄດ້ຊານດ້ວຍນີ້ ກໍຖືວ່າເປັນປຖົມຊານ ເຖີງຊຶ່ງປຖົມຊານດ້ວຍ ດັ່ງທີ່ຈະເຫັນໄດ້ ຕາມຄາຖາສັງຄຫະທີ່ ໑໕ ທີ່ຈະກ່າວຕໍ່ໄປຂ້າງໜ້ານີ້ ດ້ວຍເຫຕຸນີ້ຈຶ່ງເຫັນໂດຍອັຕໂນມັຕິວ່າ ໂລກຸຕຕຈິຕໂດຍຫຍໍ້ ໘ ດວງນີ້ຄວຣຈັດເປັນ ຊານຈິຕໄດ້ນໍາ

ສ່ວນໂລກຸຕຕຈິຕໂດຍພິສດານ ໔໐ ດວງນັ້ນ ເປັນຈິຕທີ່ປະກອບດ້ວຍຊານໂດຍແທ້ ຈຶ່ງເປັນຊານຈິຕ ຢ່າງບໍ່ມີປັນຫາ

## ຈຳແນກຈິຕທັ້ງ ๘໙ ໂດຍຊາຕິເພທ

ຄາຖາສັງຄຫະ ໑໑ ສແດງວ່າ

໑໑. ທຸວາທສາກຸສລາເນວံ ກຸສລາເນກວີສຕິ
ฉตุตฺติํเสว วิปากานิ ກຸຣິຢາຈິຕຸຕານິ ວີສຕິ ฯ

ແປລຄວາມວ່າ ອກຸສົລ ໑໒ ກຸສົລ ໒໑ ວິບາກ ໓໖ ກິຣິຍາ ໒໐ ຢ່າງນີ້

ຫມາຍຄວາມວ່າ ຈິຕທັ້ງຫມົດຊຶ່ງມີຈຳນວນໂດຍຫຍໍ້ ๘໙ ດວງນັ້ນ ເມື່ອຈຳແນກໂດຍຊາຕິເພທນັ້ນແລ້ວ ກໍມີ ໔ ຊາຕິ ຄື ຊາຕິອກຸສົລ ຊາຕິກຸສົລ ຊາຕິວິບາກ ແລະຊາຕິກິຣິຍາ

***ຊາຕິອກຸສົລ ໄດ້ແກ່ຈິຕ ໑໒ ດວງ ລ້ວນແຕ່ເປັນຈິຕທີ່ເປັນໂທษ ແລະໃຫ້ຜົລເປັນທຸກຂ໌ ຄື***

ອກຸສົລຈິຕ ໑໒ ດວງ

***ຊາຕິກຸສົລ ໄດ້ແກ່ຈິຕ ໒໑ ດວງ ລ້ວນແຕ່ເປັນຈິຕທີ່ປຣາສຈາກໂທษແລະໃຫ້ຜົລເປັນສຸຂ ຄື***

ມຫາກຸສົລຈິຕ ๘ ດວງ
ມຫັຄຄຕກຸສົລຈິຕ ໕ ດວງ
ໂລກຸຕຕຣກຸສົລຈິຕ ໘ ດວງ

***ຊາຕິວິບາກ ໄດ້ແກ່ຈິຕ ໓໖ ດວງ ລ້ວນແຕ່ເປັນຈິຕທີ່ເປັນຜົລບາປແລະຜົລຂອງບຸญ ຄື***

ອກຸສົລວິບາກ ໗ ດວງ
ອເຫຕຸກກຸສົລວິບາກ ๘ ດວງ
ມຫາວິບາກ ๘ ດວງ
ມຫັຄຄຕວິບາກ ໕ ດວງ
ໂລກຸຕຕຣວິບາກ ໔ ດວງ

***ຊາຕິກິຣິຍາ ໄດ້ແກ່ຈິຕ ໒໐ ດວງ ລ້ວນແຕ່ເປັນຈິຕທີ່ບໍ່ເປັນບຸญແລະບໍ່ເປັນບາປ ທັ້ງບໍ່ແມ່ນຜົລຂອງບາປຫຼື ຜົລຂອງບຸญດ້ວຍ ເປັນຈິຕທີ່ສັກແຕ່ວ່າກະທຳເທົ່ານັ້ນເອງ ຄື***

ອເຫຕຸກກິຣິຍາ ໓ ດວງ
ມຫາກິຣິຍາ ๘ ດວງ
ມຫັຄຄຕກິຣິຍາ ໕ ດວງ

ຊາຕິວິບາກແລະຊາຕິກິຣິຍານີ້ຣວມເອີ້ນວ່າ ຊາຕິອພຍາກຕະ ຫມາຍແຕ່ພຽງວ່າຊ
າຕິຂອງຈິຕເຫລົ່ານັ້ນບໍ່ແມ່ນກຸສົລແລະບໍ່ແມ່ນອກຸສົລ ດ້ວຍທັ້ງ ໔ ຢ່າງ

## ຈຳແນກຈິຕ ໘໙ ໂດຍພູມິເພທ

ຄາຖາສັງຄຫະທີ່ ໑໔ ສແດງວ່າ

໑໔. ຈຕຸປ຺ຸญฺญາສຣາ ກາເມ  ຣູເປ ປນ຺ນຣສີຣເຢ
ຈິຕຸຕານິ ທຸວາທສາຣູເປ  ອຕຸກຸຣານຸຕຸຕເຣ ຕຖາ ฯ

ແປລຄວາມວ່າ ກາມາວຈຣ ໕໔ ຣູປາວຈຣ ໑໕ ອຣູປາວຈຣ ໑໒ ໂລກຸຕຕຣ ໘ ຢ່າງນັ້ນ

ນິອຣິບາຍວ່າ ຈິຕທັ້ງຫມົດ ຊຶ່ງມີຈຳນວນໂດຍຫຍໍ້ ໘໙ ດວງນັ້ນ ເມື່ອຈຳແນກໂດຍພູມິເພທນັ້ນແລ້ວ

- ☞ ກາມາວຈຣຈິຕ ໕໔ ດວງ ເປັນກາມາວຈຣພູມິ
- ☞ ຣູປາວຈຣຈິຕ ໑໕ ດວງ ເປັນຣູປາວຈຣພູມິ
- ☞ ອຣູປາວຈຣຈິຕ ໑໒ ດວງ ເປັນອຣູປາວຈຣພູມິ
- ☞ ໂລກຸຕຕຈິຕ ໘ ດວງ ເປັນໂລກຸຕຕຣພູມິ

ອີກຢ່າງ ຄຳວ່າ ພູມິ ນີ້ແປລວ່າ ແຜ່ນດິນ ທີ່ດິນ ທີ່ຢູ່ອາສັຍ ກໍໄດ້ ຫຼື ແປລວ່າ ຊັ້ນ ພື້ນເພ ກໍໄດ້ ໃນທີ່ນີ້ແປລວ່າ ຊັ້ນ

- ☞ ກາມາວຈຣພູມິ ຫມາຍເຖິງ ຈິຕຊັ້ນກາມາວຈຣ ຊັ້ນກາມໂລກ
- ☞ ຣູປາວຈຣພູມິ ຫມາຍເຖິງ ຈິຕຊັ້ນຣູປາວຈຣ ຊັ້ນຣູປໂລກ
- ☞ ອຣູປາວຈຣພູມິ ຫມາຍເຖິງ ຈິຕຊັ້ນອຣູປາວຈຣ ຊັ້ນອຣູປໂລກ
- ☞ ໂລກຸຕຕຣພູມິ ຫມາຍເຖິງ ຈິຕຊັ້ນໂລກຸຕຕຣ ຄືຈິຕຊັ້ນທີ່ເຫນືອໂລກທີ່ພົ້ນຈາກໂລກ ທັ້ງ ໓ ນັ້ນ

## ຈຳແນກຈິຕໂດຍຫຍໍ້ແລະຈິຕຢ່າງພິສດາຣ

ຄາຖາສັງຄຫະທີ່ ໑໕ ສແດງວ່າ

໑໕. ອິຕຸຖເມກູນນວຸຕິປ຺  ປເພທໍ ປນ ມານສໍ
ເອກວີສສຕໍ ວາຖ  ວິກຊນ຺ຕິ ວິຈກ຺ຂຕາ ฯ

ແປລຄວາມວ່າ ບັຕທິຕຄວຣຈຳແນກຈິຕດ້ວຍປຣະກາຣລະນີ້ວ່າ ມີປຣະເພທ ໘໙ ຫຼື ໑໒໑ ດວງ

ຫມາຍຄວາມວ່າ ຈິຕທັ້ງຫມົດ ເມື່ອຈຳແນກປະເພທໂດຍຫຍໍ້ ກໍມີ ๘໙ ດວງ ແຕ່ຖ້າຈຳແນກໂດຍພິສດານແລ້ວ ມີເຖິງ ໑໒໑ ດວງ ທີ່ຫລາຍຂຶ້ນຫຼືທີ່ເພີ່ມຂຶ້ນນັ້ນ ກໍຫລາຍຂຶ້ນຫຼືເພີ່ມຂຶ້ນທີ່ໂລກຸຕຕຈິຕແຫ່ງດຽວເທົ່ານັ້ນ ສ່ວນກາມາວຈຣຈິຕກໍດີ ຣູປາວຈຣຈິຕ ກໍດີ ອຣູປາວຈຣຈິຕກໍດີ ຈຳນວນຄົງທີ່ບໍ່ມີການເພີ່ມໃຫ້ຫລາຍຂຶ້ນແຕ່ຢ່າງໃດ

## ຈຳແນກຈິຕ ๘໙ ໂດຍເວທນາເພທ

***ຈິຕໂດຍຫຍໍ້ ๘໙ ດວງນັ້ນ ຈຳແນກໂດຍຫຍໍ້ປະເພທແຫ່ງເວທນາແລ້ວ ໄດ້ດັ່ງນີ້:***

- ☞ **ສຸຂເວທນາ** ມີ ໑ ຄື ສຸຂກາຍ
- ☞ **ທຸກຂເວທນາ** ມີ ໑ ຄື ທຸກຂ໌ກາຍ
- ☞ **ໂສມນັສເວທນາ** ມີ ໖໐ ຄື ກາມໂສມນັສ ໑๘ , ຊານໂສມນັສ ໑໔ (ກາມໂສມນັສ ໑๘ ໄດ້ແກ່ ໂສມນັສໂລພມູລຈິຕ ໔ , ໂສມນັສ ສັນຕີຣຕະ ໑ , ໂສມນັສຫສິຕຸປປາທະ ໑ , ໂສມນັສມຫາກຸສົລ ໔ , ໂສມນັສມຫາວິບາກ ໔ , ໂສມນັສມຫາກິຣິຍາ ໔ ສ່ວນຊານໂສມນັສ ໑໔ ນັ້ນ ໄດ້ແກ່ ຣູປາວຈຣປຖົມຊານ ໖ , ຣູປາວຈຣທຸຕິຍຊານ ໖ , ຣູປາວຈຣຕຕິຍຊານ ໖ ແລະ ຣູປາວຈຣຈຕຸຕຖຊານ ໖)
- ☞ **ໂທມນັສເວທນາ** ມີ ໒ ຄື ໂທສມູລຈິຕທັ້ງ ໒ ດວງ
- ☞ **ອຸເບກຂາເວທນາ** ມີ ໕໕ ຄື ອຸເບກຂາໂລພມູລຈິຕ ໔ , ອຸເບກຂາໂມຫມູລຈິຕ ໒ , ອຸເບກຂາອເຫຕຸກຈິຕ ໑໔ , ອຸເບກຂາມຫາກຸສົລ ໔ , ອຸເບກຂາມຫາວິບາກ ໔ ມ ອຸເບກຂາມຫາກິຣິຍາ ໔ , ຣູປາວຈຣປັຍຈມຊານ ໖ , ອຣູປາວຈຣຈິຕ ໑໒ ແລະ ໂລກຸຕຕຈິຕ ๘

ລະເພາະໂລກຸຕຕຈິຕນັ້ນ ໄດ້ກ່າວມາແລ້ວວ່າ ຖ້າມຫາກຸສົລຊານສັມປຢຸຕຕຈິຕ ທີ່ຈເຣີຍວິປັສສນາກາວນານັ້ນເກີດພ້ອມກັບ ໂສມນັສເວທນາຈຶ່ງເກີດໂລກຸຕຕຈິຕ ໂລກຸຕຕຈິຕທີ່ເກີດຂຶ້ນນັ້ນກໍເປັນໂສມນັສເວທນາ

ຫາກວ່າມຫາກຸສົລຊານສັມປຢຸຕຕຈິຕທີ່ຈເຣີຍວິປັສສນານັ້ນເກີດພ້ອມກັບອຸເບກຂາເວທນາ ຈຶ່ງເກີດໂລກຸຕຕຈິຕແລ້ວ ໂລກຸຕຕຈິຕ ທີ່ເກີດຂຶ້ນນັ້ນກໍເປັນອຸເບກຂາເວທນາ

ແຕ່ຕາມປົກຕິທີ່ຈຳແນກຈິຕໂດຍເວທນາແລ້ວ ສ່ວນຫລາຍມັໃຈັດໂລກຸຕຕຈິຕ ๘ ດວງໄວ້ໃນອຸເບກຂາເວທນາ ດັ່ງນັ້ນໃນ ທີ່ນີ້ຈຶ່ງຈັດ ໂລກຸຕຕຈິຕ ๘ ດວງຢູ່ໃນອຸເບກຂາເວທນາເຊັ່ນດຽວກັນ

***ອີກຢ່າງ ຖ້າຈຳແນກຈິຕຢ່າງພິສດານ ໑໒໑ ດວງໂດຍປະເພທແຫ່ງເວທນາແລ້ວກໍມີດັ່ງນີ້***

- ☞ **ສຸຂເວທນາ** ມີ ໑ ຄື ສຸຂກາຍ
- ☞ **ທຸກຂເວທນາ** ມີ ໑ ຄື ທຸກຂ໌ກາຍ

- ☞ **ໂສມນັສເວທນາ** ມີ ໒໔ ຄື ກາມໂສມນັສ ໑໘ , ຣູປຊານໂສມນັສ ໑໔ ແລະໂລກຸຕຕຣທີ່ປຣະກອບດ້ວຍ ປຖົມຊານ ໘ , ໂລກຸຕຕຣທີ່ ປຣະກອບດ້ວຍທຸຕິຍຊານ ໘ , ໂລກຸຕຕຣທີ່ປຣະກອບດ້ວຍຕຕິຍຊານ ໘ , ໂລກຸຕຕຣ ທີ່ປຣະກອບດ້ວຍຈຕຸຕຖຊານ ໘
- ☞ **ໂທມນັສເວທນາ** ມີ ໒ ຄື ໂທສມູລຈິຕ ໒ ດວງ
- ☞ **ອຸເບກຂາເວທນາ** ມີ ໕໕ ຄື ກາມອຸເບກຂາ ໓໒ , ຣູປາວຈຣປັນຈມຊານ ໓ , ອຣູປາວຈຣຈິຕ ໑໒ ແລະ ໂລກຸຕຕຈິຕທີ່ປຣະກອບດ້ວຍປັນຈມຊານ ໘

( ກາມອຸເບກຂາ ໓໒ ໄດ້ແກ່ ອຸເບກຂາໃນອກຸສົລຈິຕ ໖ , ອຸເບກຂາອເຫຕຸກຈິຕ ໑໔ ແລະອຸເບກຂາໃນກາມາວຈໂສກຕຈິຕ ໑໒)

## ຈຳແນກຈິຕ ౮໑ ໂດຍເຫຕຸເພທ

***ຈິຕໂດຍຫຍໍ້ ౮໑ ດວງນັ້ນ ຈຳແນກໂດຍປຣະເພທແຫ່ງເຫຕຸແລ້ວໄດ້ດັ່ງນີ້***

ເປັນ **ອເຫຕຸກ** ຄືເປັນຈິຕທີ່ບໍ່ມີເຫຕຸນັ້ນ ມີ ໑໘ ດວງ ໄດ້ແກ່ ອເຫຕຸກຈິຕ ໑໘ ດວງເທົ່ານັ້ນເອງ

ເປັນ **ສເຫຕຸກ** ຄືເປັນຈິຕທີ່ມີສັມປຢຸຕຕນັ້ນ ມີ ໗໑ ດວງ ດັ່ງຣາຍລະອຽດຕໍ່ໄປນີ້

ເປັນ **ສເຫຕຸກຈິຕ** ທີ່ມີເຫຕຸດຽວ ເອີ້ນວ່າ **ເອກເຫຕຸຈິຕ** ນັ້ນມີ ໒ ດວງ ຄືໂມຫມູລຈິຕ ໒ ໂມຫມູລຈິຕນີ້ເປັນຈິຕທີ່ມີໂມຫເຫຕຸພຽງເຫຕຸດຽວເທົ່ານັ້ນ

ເປັນ **ສເຫຕຸກຈິຕ** ທີ່ມີເຫຕຸ ໒ ເອີ້ນວ່າ **ທວິເຫຕຸກຈິຕ** ນັ້ນ ມີຢູ່ ໒໒ ດວງ ຄື

- ☞ ໂລກມູລຈິຕ ໘ ມີໂລກເຫຕຸ ກັບ ໂມຫເຫຕຸ
- ☞ ໂທສມູລຈິຕ ໒ ມີໂທສມູລຈິຕ ກັບ ໂມຫເຫຕຸ
- ☞ ກາມາວຈໂສກຕຈິຕທີ່ເປັນຍານວິປປຢຸຕຕ ໑໒ ດວງ ມີ ອໂລກເຫຕຸກັບອໂທສເຫຕຸ

ເປັນ **ສເຫຕຸກຈິຕ** ທີ່ມີເຫຕຸ ໓ ເອີ້ນວ່າ ຕິເຫຕຸກຈິຕ ຄື ມີທັ້ງ **ອໂລກເຫຕຸ ອໂທສເຫຕຸ** ແລະ **ອໂມຫເຫຕຸ** ນັ້ນມີ ໔໗ ດວງ ຄື

- ☞ ກາມາວຈໂສກຕຈິຕທີ່ເປັນຍານສັມປຢຸຕຕ ໑໒ ດວງ
- ☞ ມຫັຄຄຕຈິຕ ໒໗ ດວງ
- ☞ ໂລກຸຕຕຈິຕ ౮ ດວງ

## ຈຳແນກຈິຕ ౮໑ ໂດຍສັງຂາຣເພທ

***ຈິຕໂດຍຫຍໍ້ ౮໑ ດວງນັ້ນ ຈຳແນກໂດຍປຣະເພທແຫ່ງສັງຂາຣແລ້ວ ໄດ້ດັ່ງນີ້***

ເປັນ **ອສັງຂາຣິກ** ມີ ໓໗ ດວງ ຄື ອກຸສົລຈິຕທີ່ເປັນອສັງຂາຣິກ ໗, ອເຫຕຸກຈິຕຊຶ່ງຈັດເປັນອສັງຂາຣິກທັ້ງ ໑໘ ແລະກາມໂສພຕຈິຕ ທີ່ເປັນ ອສັງຂາຣິກ ໑໒

ເປັນ **ສສັງຂາຣິກ** ມີ ໕໔ ດວງ ຄື ອກຸສົລຈິຕທີ່ເປັນສສັງຂາຣິກ ໕ ກາມໂສພຕຈິຕທີ່ເປັນສສັງຂາຣິກ ໑໒ ມຫັຄຄຈິຕ ໒໗ ແລະ ໂລກຸຕຕຈິຕ ໘

## ຈຳແນກຈິຕ ໘໙ ໂດຍສັມປຢຸຕຕເພທ

*ຈິຕໂດຍຫຍໍ້ ໘໙ ດວງນັ້ນ ຈຳແນກໂດຍປຣະເພທສັມປຢຸຕຕແລ້ວ ໄດ້ດັ່ງນີ້*

☞ ເປັນ ທິຝຖິສັມປຢຸຕຕ ມີ ໔ ຄື ໂລກມູລຈິຕທີ່ເປັນທິຝຖິຄຕສັມປຢຸຕຕ ໔ ດວງ

☞ ເປັນ ປຝິໝສັມປຢຸຕຕ ມີ ໒ ຄື ໂທສມູລຈິຕທັ້ງ ໒ ດວງ

☞ ເປັນ ວິຈິກິຈຉາສັມປຢຸຕຕ ມີ ໑ ຄື ໂມຫມູລຈິຕດວງທີ່ ໑

☞ ເປັນ ອຸທັຈຈສັມປຢຸຕຕ ມີ ໑ ຄື ໂມຫມູລຈິຕດວງທີ່ ໒

☞ ເປັນ ຌາຕສັມປຢຸຕຕ ມີ ໔໗ ຄື ກາມໂສພຕຌາຕສັມປຢຸຕຕຈິຕ ໑໒ ມຫັຄຄຈິຕ ໒໗ ແລະ ໂລກຸຕຕຈິຕ ໘

☞ ເປັນ ທິຝຖິວິປປຢຸຕຕ ມີ ໔ ຄື ໂລກມູລຈິຕທີ່ເປັນທິຝຖິຄຕວິປປຢຸຕຕ ໔ ດວງ

☞ ເປັນ ຌາຕວິປປຢຸຕຕ ມີ ໑໒ ຄື ກາມໂສພຕຌາຕວິປຢຸຕຕຈິຕ ໑໒ ດວງ

☞ ເປັນ ວິປປຢຸຕຕຈິຕ ມີ ໑໘ ຄື ອເຫຕຸກຈິຕ ໑໘ ຊຶ່ງບໍ່ມີທິຝຖິ ປຝິໝະ ວິຈິກິຈຉາ ອຸທັຈຈະ ຫຼື ຌາຕ (ປັຌຌາ) ມາສັມປຢຸຕຕ ດ້ວຍເລີຍແມ້ແຕ່ຢ່າງດຽວ

## ຈຳແນກຈິຕ ໘໙ ໂດຍໂສພຕເພທ

*ຈິຕໂດຍຫຍໍ້ ໘໙ ດວງນັ້ນ ຈຳແນກໂດຍປຣະເພທແຫ່ງໂສພຕະແລ້ວ ໄດ້ດັ່ງນີ້*

☞ ເປັນ **ໂສພຕະ** ໕໙ ດວງ ຄື ກາມໂສພຕຈິຕ ໒໔ , ມຫັຄຄຕຈິຕ ໒໗ ແລະໂລກຸຕຕຈິຕ ໘

☞ ເປັນ **ອໂສພຕະ** ໓໐ ດວງ ຄື ອກຸສົລຈິຕ ໑໒ ແລະ ອເຫຕຸກຈິຕ ໑໘

## ຈຳແນກຈິຕ ໘໙ ໂດຍໂລກເພທ

*ຈິຕໂດຍຫຍໍ້ ໘໙ ດວງນັ້ນ ຈຳແນກໂດຍປຣະເພທແຫ່ງໂລກແລ້ວ ໄດ້ດັ່ງນີ້*

☞ ເປັນ **ໂລກິຍະ** ໘໑ ດວງ ຄື ກາມຈິຕ ໕໔ ແລະ ມຫັຄຄຕຈິຕ ໒໗

☞ ເປັນ **ໂລກຸຕຕຣະ** ໘ ດວງ ຄື ໂລກຸຕຕຈິຕ ໘

## ຈຳແນກຈິຕ ໘໙ ໂດຍຌານເພທ

***ຈິຕໂດຍຫຍໍ້ ກຸລ ດວງນັ້ນ ຈຳແນກໂດຍປຣະເພທແຫ່ງຊານແລ້ວ ໄດ້ດັ່ງນີ້***

☞ ເປັນ **ຊານຈິຕ** ໖໗ ດວງ ຄື ມຫັຄຄຕຈິຕ ໖໗

☞ ເປັນ **ອຊານຈິຕ** ໕໔ ດວງ ຄື ອກຸສົລຈິຕ ໑໒ , ອເຫຕຸກຈິຕ ໑໘, ກາມໂສກາຈິຕ ໒໔ ແລະ ໂລກຸຕຕຈິຕ ໘

## ຈຳແນກໂລກຸຕຕຈິຕໂດຍອົງຄ໌ຊານ

ຄາຖາສັງຄຫະທີ່ ໑໔ ສແດງວ່າ

໑໔. ຊານງຄໂຢຄເພເທນ ກຕ຺ວເກກນ຺ຕຸ ປຌ຺ຈທາ

ວຸຈ຺ຈຕານຸຕ຺ຕຣໍ ຈິຕ຺ຕໍ ຈຕ຺ຕາຮີສວິຣຮຸຕິ ຈ ໆ

ແປລຄວາມວ່າ ໂລກຸຕຕຈິຕນັ້ນທ່ານກ່າວວ່າມີ ໔໐ ເພາະຈຳແນກອອກໄປ ໕ ປຣະເພທຕາມຈຳນວນອົງຄ໌ຊານທີ່ປຣະກອບ ມີຄວາມຫມາຍວ່າ ໂລກຸຕຕຈິຕ ໘ ດວງນັ້ນ ເມື່ອຈຳແນກອອກໄປຕາມຈຳນວນອົງຄ໌ຊານທີ່ປຣະກອບແລ້ວ ກໍໄດ້ ໕ ປຣະເພທ ຄື:

ປຣະເພທທີ່ ໑ ໂລກຸຕຕຈິຕ ໘ ດວງ ມີອົງຄ໌ຊານປຣະກອບ ໕ ອົງຄ໌ ໄດ້ແກ່ ວິຕົກ ວິຈາຣ ປີຕິ ສຸຂ ເອກັຄຄຕາ (ຄື ໂລກຸຕຕຈິຕ ທີ່ປຣະກອບດ້ວຍປຖົມຊານ)

ປຣະເພທທີ່ ໒ ໂລກຸຕຕຈິຕ ໘ ດວງ ມີອົງຄ໌ຊານປຣະກອບ ໔ ອົງຄ໌ ໄດ້ແກ່ ວິຈາຣ ປີຕິ ສຸຂ ເອກັຄຄຕາ (ຄື ໂລກຸຕຕຈິຕ ທີ່ປຣະກອບດ້ວຍທຸຕິຢຊານ)

ປຣະເພທທີ່ ໓ ໂລກຸຕຕຈິຕ ໘ ດວງ ມີອົງຄ໌ຊານປຣະກອບ ໓ ອົງຄ໌ ໄດ້ແກ່ ປີຕິ ສຸຂ ເອກັຄຄຕາ (ຄື ໂລກຸຕຕຈິຕ ທີ່ປຣະກອບດ້ວຍຕຕິຢຊານ)

ປຣະເພທທີ່ ໔ ໂລກຸຕຕຈິຕ ໘ ດວງ ມີອົງຄ໌ຊານປຣະກອບ ໒ ອົງຄ໌ ໄດ້ແກ່ ສຸຂ ເອກັຄຄຕາ (ຄື ໂລກຸຕຕຈິຕ ທີ່ປຣະກອບດ້ວຍຈຕຸຕຖຊານ)

ປຣະເພທທີ່ ໕ ໂລກຸຕຕຈິຕ ໘ ດວງ ມີອົງຄ໌ຊານປຣະກອບ ໒ ອົງຄ໌ ໄດ້ແກ່ ອຸເບກຂາ ເອກັຄຄຕາ (ຄື ໂລກຸຕຕຈິຕ ທີ່ປຣະກອບດ້ວຍປັຌຈມຊານ)

ມີຂໍ້ຄວຣສັງເກຕວ່າ ປຣະເພທທີ່ ໔ ກັບປຣະເພທທີ່ ໕ ແມ້ວ່າຈະມີອົງຄ໌ຊານ ໒ ອົງຄ໌ເທົ່າກັນກໍຈິງ ແຕ່ວ່າຊນິດຂອງອົງຄ໌ຊານ ນັ້ນບໍ່ເຫມືອນກັນ ຈຶ່ງຕ້ອງແຍົກເປັນຄົນລະປຣະເພທ

ຣວມເປັນ ໕ ປຣະເພທ ຊຶ່ງແຕ່ລະປຣະເພທກໍມີໂລກຸຕຕຈິຕ ໘ ດວງ ຫຼື ຈະກ່າວອີກນັຍນຶ່ງວ່າ ໂລກຸຕຕຈິຕ ໘ ດວງນັ້ນ ແຕ່ລະດວງກໍມີ ໕ ປຣະເພທ ດ້ວຍເຫຕຸນີ້ໂລກຸຕຕຈິຕຢ່າງພິສດາຈຶ່ງມີ ໔໐ ດວງ

ອີກຢ່າງ ຄາຖາສັງຄຫະນີ້ສແດງໃຫ້ເຫັນຊັດແນ່ເຈນວ່າ ໂລກຸຕຕຈິຕໂດຍພິສດາຣນັ້ນແບ່ງພຽງ ໕ ປຣະເພທຕາມອຳນາຈ ແຫ່ງອົງຄ໌ຊານ ບໍ່ໄດ້ແບ່ງເປັນ ໙ ປຣະເພທຕາມຈຳນວນຊານ ຄື ຣູປຊານ ໕ ອຣູປຊານ ໔ ນັ້ນເລີຍ

# ຊານ ກັບ ມັຄຄຜົລ

ຄາຖາສັງຄຫະທີ່ ໑໕ ສແດງວ່າ

໑໕. ຢຖາ ຈ ຣູປາວຈຣໍ ຄຍ຺ຫຕານຸຕ຺ຕຣໍ ຕຖາ
ປຖມາທິຊຊານເພເທ ອາຣຸປ຺ປຍ຺ຈາປິ ປຍ຺ຈເມ ฯ

ແປລຄວາມວ່າ ໂລກຸຕຕຈິຕຖືວເໝືອນວ່າປຖົມຊານເປັນຕົ້ນຈັ່ງໃດ ແມ້ອຣູປາວຈຣຊານກໍຖືວເໝືອນວ່າປັຍຈມຊານຈັ່ງຊັ້ນ ມີອະທິບາຍໄວ້ວ່າໂລກຸຕຕຈິຕຂອງພຣະອຣິຍບຸຄຄົລທີ່ບໍ່ໄດ້ທຳຊານມາກ່ອນ ເມື່ອສຳເຣັຈມັຄຄຜົລຍ່ອມມີປຖົມຊານເຂົ້າປຣະກອບດ້ວຍ ຈຶ່ງຈັດໂລກຸຕຕຈິຕເຂົ້າໄວ້ໃນປຖົມຊານດ້ວຍ

ສ່ວນບຸຄຄົລທີ່ໄດ້ຊານມາກ່ອນແລ່ຊານໃດ ຕັ້ງແຕ່ປຖົມຊານເຖິງປັຍຈມຊານເມື່ອສຳເຣັຈມັຄຄຜົລ ກໍເກີດພ້ອມອົງຄ໌ຊານນັ້ນໆ ດ້ວຍ ຄື:

☞ ຜູ້ໄດ້ ປຖົມຊານ ສຳເຣັຈມັຄຄຜົລປຣະກອບດ້ວຍ ປຖົມຊານ
☞ ຜູ້ໄດ້ ທຸຕິຍຊານ ສຳເຣັຈມັຄຄຜົລປຣະກອບດ້ວຍ ທຸຕິຍຊານ
☞ ຜູ້ໄດ້ ຕຕິຍຊານ ສຳເຣັຈມັຄຄຜົລປຣະກອບດ້ວຍ ຕຕິຍຊານ
☞ ຜູ້ໄດ້ ຈຕຸຕຖຊານ ສຳເຣັຈມັຄຄຜົລປຣະກອບດ້ວຍ ຈຕຸຕຖຊານ
☞ ຜູ້ໄດ້ ປັຍຈມຊານ ສຳເຣັຈມັຄຄຜົລປຣະກອບດ້ວຍ ປັຍຈມຊານ

ແມ້ໃນ ອຣູປຊານທັ້ງໝົດ ກໍຈັດເຂົ້າເປັນປັຍຈມຊານ

# ຊານຈິຕ ໖໗

ຄາຖາສັງຄຫະທີ່ ໑໖ ສແດງວ່າ

໑໖. ເອກາທສວິທໍ ຕສ຺ມາ ປຖມາທິກມີຣິຕໍ
ຊານເມເກກມນ຺ເຕ ຕຸ ເຕວີສຕິວິທໍ ພເວ ฯ

ແປລຄວາມວ່າ ປຖົມຊານເປັນຕົ້ນ ທ່ານກ່າວວ່າແຕ່ລະຊານມີ ໑໑ ດວງ ທີ່ສຸດຄືປັຍຈມຊານນັ້ນ ມີ ໒໓ ດວງ

☞ ປຖົມຊານ ໑໑ ໄດ້ແກ່ ໂລກິຍຈິຕ ໓ ໂລກຸຕຕຈິຕ ໘
☞ ທຸຕິຍຊານ ໑໑ ໄດ້ແກ່ ໂລກິຍຈິຕ ໓ ໂລກຸຕຕຈິຕ ໘
☞ ຕຕິຍຊານ ໑໑ ໄດ້ແກ່ ໂລກິຍຈິຕ ໓ ໂລກຸຕຕຈິຕ ໘
☞ ຈຕຸຕຖຊານ ໑໑ ໄດ້ແກ່ ໂລກິຍຈິຕ ໓ ໂລກຸຕຕຈິຕ ໘
☞ ປັຍຈມຊານ ໒໓ ໄດ້ແກ່ ໂລກິຍຈິຕ ໑໕ ໂລກຸຕຕຈິຕ ໘

***ຮວມເປັນຊານຈິຕ*** ***໖໗*** ນັ້ນກໍຄື ມຫັຄຄຈິຕ **໒໗** ດວງ ແລະ ໂລກຸຕຕຈິຕ ພິສດານ **໔໐** ດວງ

ທີ່ວ່າ **ປຖົມຊານ ໑໑** ໄດ້ແກ່ ໂລກິຍຈິຕ ໓ ຄື ຣູປາວຈຣປຖົມຊານກຸສົລຈິຕ ໑, ຣູປາວຈຣປຖົມວິບາກຈິຕ ໑, ຣູປາວຈຣກິຣິຍາຈິຕ ໑ ແລະ ໂລກຸຕຕຈິຕ ໘ ຄື ໂສດາປັຕຕິມັຄຄຈິຕ ໑ ຜົລຈິຕ ໑, ສກທາຄາມິມັຄຄຈິຕ ໑ ຜົລຈິຕ ໑, ອນາຄາມິມັຄຄຈິຕ ໑ ຜົລຈິຕ ໑, ອຣຫັຕຕມັຄຄຈິຕ ໑ ຜົລຈິຕ ໑ ຊຶ່ງໄດ້ປັຍຈມຊານ

**ທຸຕິຍຊານ ໑໑, ຕຕິຍຊານ ໑໑, ຈຕຸຕຖຊານ ໑໑ ກໍມີນັຍທ່ານອງດຽວກັນນີ້**

ສ່ວນ **ປັຍຈມຊານ ໒໓** ນັ້ນໄດ້ແກ່ ໂລກິຍຈິຕ ໑໕ ຄື ຣູປາວຈຣປັຍຈມຊານກຸສົລຈິຕ ໑, ຣູປາວຈຣປັຍຈມຊານວິບາກຈິຕ ໑, ຣູປາວຈຣປັຍຈມຊານກິຣິຍາຈິຕ ໑, ອຣູປາວຈຣກຸສົລຈິຕ ໔, ອຣູປາວຈຣວິບາກຈິຕ ໔, ອຣູປາວຈຣກິຣິຍາຈິຕ ໔ ແລະ ໂລກຸຕຕຈິຕ ໘ ຊຶ່ງໄດ້ປັຍຈມຊານ

## ຈຳນວນກຸສົລຈິຕແລະວິບາກຈິຕໂດຍພິສດານ

ຄາຖາສັງຕຫະທີ່ ໑໗ ສແດງວ່າ

໑໗. ສຕ຺ຕຕິສວິທໍ ປຸຍ຺ຍໍທ຺ວິປຍ຺ຍາສວິສມ຺ຕຖາ
ປາກມິຈ຺ຈາຫຸຈິຕ຺ຕານິ ເອກວິສສຕມ຺ພຸສາฯ

ແປລຄວາມວ່າ ກຸສົລຈິຕ ໓໗ ແລະ ວິບາກຈິຕ ໕໔ ຢ່າງນີ້ ບັຕທິຕທາກໍຮູ້ວ່າ ທ່ານກ່າວຢ່າງພິສດານ

ອະທິບາຍວ່າ ໄດ້ສແດງມາແລ້ວວ່າ ກຸສົລຈິຕມີ ໒໑ ແລະ ວິບາກຈິຕມີ ໓໖ ນັ້ນ ເປັນການຈຳແນກຂອງຈິຕໂດຍຫຍໍ້ ໘໙ ດວງຕາມ ຄວາມໃນຄາຖາສັງຄຫະທີ່ ໑໑

ແຕ່ໃນທີ່ນີ້ ເປັນການຈຳແນກຈິຕໂດຍພິສດານ ໑໒໑ ດວງ ດັ່ງນັ້ນກຸສົລຈິຕຈຶ່ງມີເຖິງ ໓໗ ດວງ ແລະວິບາກຈິຕມີ ໕໔ ດວງ

**ກຸສົລຈິຕ** ໓໗ ດວງນັ້ນ ໄດ້ແກ່

☞ ມຫາກຸສົລ ໘
☞ ມຫັຄຄຕກຸສົລ ໙
☞ ໂລກຸຕຕຣກຸສົລ ໒໐ (ຊຶ່ງໂດຍຫຍໍ້ມີພຽງ ໔ ດວງ)

**ວິບາກຈິຕ** ໕໔ ດວງນັ້ນ ໄດ້ແກ່

☞ ອກຸສົລວິບາກ ໗
☞ ອເຫຕຸກກຸສົລວິບາກ ໘
☞ ມຫາວິບາກ ໘
☞ ມຫັຄຄຕວິບາກ ໙
☞ ໂລກຸຕຕຣວິບາກ ໒໐ (ຊຶ່ງໂດຍຫຍໍ້ມີພຽງ ໔ ດວງ)

# ອວສານຄາຖາ

ອິຈ຺ຈານຸຣຸທ຺ທຣຈິເຕ ອກິສມ຺ມຕ຺ຖສ຺ງຄເຫ
ປຖໂມປຣິຈ຺ເຈໂທຍ໌ ສມາເສເນວນິຕ຺ຖິໂຕຯ



ນີ້ປຣິຈເຈທທີ່ ໑ (ຊື່ **ຈິຕຕສັງຄຫວິກາຄ**) ໃນປກຣຕ໌ອັນຣວບຣວມຊຶ່ງອັຖແຫ່ງພຣະອກິທັມມ໌ ທີ່ພຣະອນຸຣຸທຣາຈາຕຍ໌ຈນາໄວ້ ຈົບແລ້ວໂດຍຫຍໍ້ພຽງເທົ່ານີ້ແລ



ຂໍອນຸໂມທນາ....ຂໍໃຫ້ຈເຣີຍໃນທັມມ໌ຍິ່ງໆ ຂຶ້ນໄປ ....

